# ປະວັດຕິໜັງສືພາສາລາວ

## *ຄຳປຣາຣົກ*

ຫຼັງຈາກ ຜຂ ໄດ້ແປລພຣະໄຕຣປິຜົກໃຫ້ເປັນພາສາລາວ ໂດຍໃຊ້ພາສາລາວ ໒໗ ໂຕສຳເຣັຈແລ້ວໄດ້ນຳໄປໃຫ້ ຍາທ່ານ ດຣ. ພຣະມຫາວັນດີ ກັນຕະສີໂລ (ວິຖາເຄນ)ເບິ່ງ ຍາທ່ານໄດ້ເມຕຕາ-ກຣຸຕາໃຫ້ທັສນະ ແລະ ກ່າວເຕືອນວ່າ ***"ຫາກພວກເຮົາບໍ່ໃຊ້ໂຕອັກສຣທີ່ສົມບູຣຕ໌ຕາມພາສາປາລີແລ້ວ ອັຕຖ໌ຂອງພຣະພຸທສພົຈນ໌ ຈະບໍ່ກົງກັບຄວາມໝາຍເລີຍ!"*** ຜຂ ຈຶ່ງໄດ້ເລີ້ມຄົ້ນຫາຫາໂຕອັກສຣພາສາລາວ ທີ່ໃຊ້ໃນຄຕະພຣະສົງພ໌ລາວທີ່ໃຊ້ກັນໃນປີ ໑໙໓໕ ແລະໂຊຄດີໄດ້ພົບກັບທ່ານ ດຣ. ຄຳພາ ສີດາວົງສ໌, ທ່ານ ດຣ. ຄຳພາໄດ້ໃຫ້ການຊ່ອຍເຫລືອແນະນຳແລະຍັງອອກແບບໂຕພິມພ໌ ໃຫ້ຫລາຍໆ ເທື່ອ ຍັງບໍ່ພໍ ທ່ານຍັງຄອຍໃຫ້ກຳລັງໃຈໃນຍາມທີ່ ຜຂ ມີຄວາມທໍ້ຖອຍເພາະການຂຽນຕາມຫລັກໄວຍາກຣຕ໌ລາວ ນັ້ນມີຄວາມຍຸ້ງຍາກພໍສົມຄວຣ ເພາະບໍ່ມີແບບຢ່າງທີ່ສົມບູຣຕ໌ ຜຂ ຈຶ່ງເລີ້ມຕົ້ນສຶກສາຢ່າງຈິງຈັງ ດ້ວຍເຫຕຸຜົລຫລາຍປະການ:

- ☞ ເພາະຕ້ອງການເຜີຍແຜ່ພຣະທັມມ໌ຄຳສອນຂອງພຣະສາສດາ "ພຣະພຸທສພົຈນ໌ ຫຼື ພຣະພຸທສວຈນ" ໃຫ້ຖືກຕ້ອງ
- ☞ ແປລ-ພິມພ໌ພຣະໄຕຣປິຜົກເປັນພາສາລາວ ເພື່ອໃຫ້ເປັນສົມບັຕິຂອງພຸທສສານິກຊົນລາວ
- ☞ ເພື່ອໃຫ້ເປັນແບບຢ່າງທີ່ມາຕຖານໃນພາສາລາວ-*ປາລີໃຫ້ຊົນຮຸ່ນຫລັງ* ***ເພາະຫາກ ຜຂ ບໍ່ເຮັດ ບໍ່ຂຽນ!*** ຍ້ອນວ່າ ຜຂ *ຮູ້ທັງພາສາລາວ-ພາສາໄທຍ໌ດີ* ຕລອດເຖິງ *ຮູ້ການໃຊ້ຄອມພິວເຕີຣ໌ດີ ເຄີຍຖາມໂຕເອງສເມີວ່າ* ***"ແລ້ວໃຜຈະເຮັດ!"***
- ☞ *ເຄີຍເຫັນຄຳຜາຣົກຂອງພຣະສັງພຣາຊລາວ* (ສົມເດັຈພຣະຍອດແກ້ວ ພຸທສຊິໂນຣົສສະກົລມຫາສັງພປາໂມກຂ໌) ກ່າວວ່າຢາກເຫັນພຣະໄຕຣປິຜົກເປັນພາສາລາວ ໃນປຶ້ມອນຸສຣຕ໌ "**ມູລມໍ່ຣດົກຊົນຊາຕິອ້າຍລາວ**" *ນີ້ເປັນກຳລັງສຳຄັນ!*

ດ້ວຍເຫຕຸຜົລນີ້ ຜຂ (ອາຈາຣຍ໌ໄພທູຣຍ໌ ອິນທວົງສ໌) ຈຶ່ງໄດ້ນຳພາສາລາວທີ່ທາງຄຕະສົງພ໌ລາວເຮົາເຄີຍໃຊ້ມາຂຽນປຶ້ມທາງດ້ານທັມມະ ມາເບິ່ງຄວາມແຕກຕ່າງພາສາລາວ-ໄທຍ໌ພໍເປັນສັງເຂປ:

## ວິວັຒນາກາຣໂຕຫນັງສືໄທຍ໌



## ໂຕຫນັງສືໄທຍ໌ຂອງພໍ່ຂຸນຣາມຄຳແຫງ




| | | | | |
|---|---|---|---|---|
| ก | ข | ค | ฆ | ง |
| ka | kha | ga | gha | ṅa |
| จ | ฉ | ช | ฌ | ญ |
| ca | cha | ja | jha | ña |
| ฏ | ฐ | ฑ | ฒ | ณ |
| ṭa | ṭha | ḍa | ḍha | ṇa |
| ต | ถ | ท | ธ | น |
| ta | tha | da | dha | na |
| ป | ผ | พ | ภ | ม |
| pa | pha | ba | bha | ma |

| | | | | | | | | |
|---|---|---|---|---|---|---|---|---|
| ย | ร | ล | ว | ส | ห | ฬ | อ | ◌ํ |
| ya | ra | la | va | sa | ha | ḷa | *initial* a | -ṁ |

| | | | | | | | | |
|---|---|---|---|---|---|---|---|---|
| ◌ะ | ◌า | ◌ิ | ◌ี | ◌ุ | ◌ู | เ◌ | โ◌ | ◌ฺ |
| *final* a | ā | i | ī | u | ū | ē | ō | *no vowel* |

# ໂຕຫນັງສືລາວເຮົາທີ່ໃຊ້ໃນກຸ່ມຄຕະສົງພ໌ລາວ ໂດຍສະເພາະ

| | | | | |
|---|---|---|---|---|
| ກ | ຂ | ຄ | ຆ | ງ |
| ka | kha | ga | gha* | ṅa |
| ຈ | ຉ | ຊ | ຌ | ຎ |
| ca | cha* | ja | jha* | ña* |
| ຏ | ຐ | ຑ | ຒ | ຓ |
| ṭa* | ṭha* | ḍa* | ḍha* | ṇa* |
| ຕ | ຖ | ທ | ຘ | ນ |
| ta | tha | da | dha* | na |
| ປ | ຜ | ພ | ຠ | ມ |
| pa | pha | ba | bha* | ma |

| | | | | | | | | |
|---|---|---|---|---|---|---|---|---|
| ຍ | ຣ | ລ | ວ | ສ | ຫ | ຬ | ອ | ◌ໍ |
| ya | ra | la | va | sa | ha | ḷa* | *initial* a | -ṁ |

| | | | | | | | | |
|---|---|---|---|---|---|---|---|---|
| ◌ະ | ◌າ | ◌ິ | ◌ີ | ◌ຸ | ◌ູ | ເ◌ | ໂ◌ | ◌຺ |
| *final* a | ā | i | ī | u | ū | ē | ō | *no vowel* |

| Lao | Thai | Lao | Thai |
|---|---|---|---|
| ຆ | ฆ | ຒ | ฒ |
| ຉ | ฉ | ຓ | ณ |
| ຌ | ช ฌ | ຘ | ธ |
| ຎ | ญ | ຠ | ภ |
| ຏ | ฎ ฏ | ຨ | ศ |
| ຐ | ฐ | ຩ | ษ |
| ຑ | ฑ | ຬ | ฬ |



ຂໍທ່ານຈົ່ງພຍາຍາມຮຽນອ່ານເພື່ອສນອງເຈຕນາຣົມຕ໌ຂອງທາງຄຕະສົງພ໌ລາວ, ຫລວງປູ່ ດຣ. ພຣະມຫາວັນດີ ກັນຕສີໂລ ແລະ ຍາທ່ານ ດຣ. ພຣະມຫາສົງທອງ ບັຣລືສັກດິ໌ ທີ່ໃຫ້ຄວາມເປັນຫ່ວງໃນກາຣເຜີຍແຜ່ພຣະລັມມ໌ຄຳສອນຂອງພຣະສາສດາ.

# ທາງ ໗ ສາຍ

ໂດຍ: พระธัมมธิธราชุมหามุนิ (โชดิภ ญาตสิทฺธิ ป.ธ. ๙ )...ຮຽບຮຽງໂດຍ: ອ. ໄພທູຣຍ໌ ອິນທວົງສ໌

ບົທຄວາມທຳອິດທີ່ຕັ້ງໃຈນຳສເນີນີ້ມຸ່ງຫມາຍໃຫ້ເຫັນภັຍກາຣວຽນເກີດວຽນຕາຍໃນສັງສາຣວັຍນີ້ ອັນນຳໄປສູ່ຄວາມສລົດສັງເວຊ ຄວາມເບື່ອຫນ່າຍ ແລະຄວາມປັຕຖນາທາງສງົບແຫ່ງທີ່ສຸດ ຄື ຫຢຸດເກີດຫຢຸດຕາຍ ຖືເປັນສັມມາທິຕຖິ (ຄວາມເຫັນຊອບ) ເຊິ່ງເປັນຮາກຖານສຳຄັນທີ່ຈະສຶກສາປຕິບັຕິ ທັມມ໌ ແຫ່ງອົງຄ໌ພຣະສັມມາສັມພຸທຣເຈົ້າສືບເນື່ອງຍິ່ງໆ ຂຶ້ນໄປ



ຄຳວ່າ "**ທາງ**" ແປລວ່າ ເຮັດໃຫ້ຕ້ຽນ ເຮັດໃຫ້ສະອາດ ຖ້າເປັນຊື່ຂອງທັມມະ ແປລວ່າ ທັມມະເປັນເຄື່ອງດຳເນີນໄປສູ່ພຣະນິພພານ ທັມມະອັນບຸຄຄົລຜູ້ຕ້ອງການພຣະນິພພານຄວຣສແວງຫາ ແລະແປລວ່າ **ທັມມະ** ທີ່ຂ້າກິເລສໄປກໍໄດ້

**ທາງນັ້ນ ຈຳແນກອອກເປັນ ໔ ຄື:**

1. **ປກຕິມຄຸໂຄ:** ທາງປົກຕິ ໄດ້ແກ່ ທາງບົກ ທາງນ້ຳ ທາງອາກາສ ເປັນຕົ້ນ ສຳຣັບຄົນແລະສັຕວ໌ຍ່າງ
2. **ປຕິປທານມຄຸໂຄ:** ທາງປຕິບັຕິ ໄດ້ແກ່ບຸຄບາປທີ່ຄົນເຮັດ ສຳຣັບ ກາຍ ວາຈາ ໃຈ ຍ່າງ

## ທາງປຕິບັຕິນັ້ນ ຈຳແນກເປັນ ໗ ສາຍ ຄື

1. ທາງໄປນຣົກ ໄດ້ແກ່ ໂທສະ
2. ທາງໄປເປຕແລະອສຸຣກາຍ ໄດ້ແກ່ ໂລກະ
3. ທາງໄປສັຕວ໌ດຽຣສານ ໄດ້ແກ່ ໂມຫະ
4. ທາງໄປມນຸສຍ໌ ໄດ້ແກ່ ສີລ ໕ ແລະກຸສົລກັມມບົຖ ໑໐
5. ທາງໄປສວັຣຄ໌ ໄດ້ແກ່ ມຫາກຸສົລ ໘
6. ທາງໄປພຣົຫ໌ມໂລກ ໄດ້ແກ່ ສມຖກັມມຖານ ອ່ານວ່າ "ສະມະຖະກັມມະຖານ"
7. ທາງໄປນິພພານ ໄດ້ແກ່ ວິປັສສນາກັມມຖານ

# ບົດທີ່ ໑ ທາງໄປນຣົກ



ນຣົກ ແປລວ່າ ປຣະເທສທີ່ປຣາສຈາກຄວາມສຸຂ ມີແຕ່ຄວາມທຸກຂ໌ ມີຢູ່ ໔໕໗ ຂຸມ ຂຸມໃຫຍ່ມີ 9 ຂຸມ ນັບຕັ້ງແຕ່ສັຍຊີວນຣົກ ກາຣສຸຕຕນຣົກເປັນຕົ້ນ ໄປຈົນເຖິງໂລກັນຕນຣົກ ຈາກນຣົກໃຫຍ່ແຕ່ລະຂຸມ ອອກໄປໃນທິສທັ້ງ ໔ ແຕ່ລະທິສມີອຸສສຸທນຣົກທິສລະ ໔ ຂຸມ ຣວມເປັນ ໑໑໗ ຂຸມ ຈາກອຸສສຸທນຣົກອອກໄປອີກມີຍົມໂລກິຍ ນຣົກຢູ່ທິສລະ ໑໐ ຂຸມ ຣວມເປັນ ໓໒໐ ຂຸມ ສ່ວນຂຸມທີ່ເລິກທີ່ສຸດ ຊື່ ວ່າ ໂລກັນຕນຣົກ ຢູ່ທີ່ສຸດຂອງໂລກ ຣວມທັ້ງຫມົດເປັນ ໔໕໗ ຂຸມ ຕັ້ງຮຽງກັນຢູ່ໃຕ້ພື້ນດິນ ເຊິ່ງຫນາໄດ້ ໒໔໐,໐໐໐ **ໂຍຊນ໌**[1]

ເຫຕຸທີ່ນຳໄປຕົກນຣົກສ່ວນຫລາຍ ໄດ້ແກ່**ໂທສະ** ດັ່ງມີຫລັກຖານຮັບຮອງໄວ້ວ່າ

**"ໂທເສນ ຫີ ຈຕຸ ທຂຊາຕິຕາຍ ໂທສສທີສໍ ນິຣຍໍ ອຸປປຊຊນຸຕິ"**

ຂໍຮັບຮອງວ່າເປັນຈິງຢ່າງນັ້ນ ເພາະໂທສະເປັນເຫຕຸ ສັຕວ໌ທັ້ງຫລາຍຈຶ່ງໄປຕົກນຣົກ ເຊິ່ງມີລັກສຕະເຊັ່ນດຽວກັນກັບໂທສະ ເພາະໂທສະມີຊາຕິຫຍາບຄາຍ

# ຜູ້ພິສູຈນ໌ນຣົກ - ສວັຣຄ໌ໄດ້

ຜູ້ທີ່ຈະພິສູຈນ໌ນຣົກສວັຣຄ໌ໄດ້ນັ້ນ ຕ້ອງມີເຄື່ອງມືຄື ປັນຍາ ປັນຍານັ້ນມີຢູ່ ໓ ປຣະການ ຄື ສຸຕມຍປັນຍາ ໑ ຈິນຕາມຍປັນຍາ ໑ ກາວນາມຍປັນຍາ ໑

1. **ສຸຕມຍປັນຍາ** ປັນຍາເກີດຈາກການຟັງ ການສຶກສາຮ່ຳຮຽນ ການທ່ອງຈຳ ການອ່ານຕຳຣັບຕຳຣາໂດຍທົ່ວໆ ໄປ ປັນຍາຂັ້ນນີ້ພິສູຈນ໌ນຣົກສວັຣຄ໌ບໍ່ໄດ້
2. **ຈິນຕາມຍປັນຍາ** ປັນຍາເກີດຈາກການຄິດ ເຊັ່ນ ຄິດເຮັດຣົຖຍົນຕ໌ ຣົຖໄຟ ຍົນ ອາວຸລຍຸທສັຕຕ໌ ອະພອນໂລ່ຈຣວດ ເປັນຕົ້ນ ປັນຍາຂັ້ນນີ້ກໍພິສູຈນ໌ນຣົກສວັຣຄ໌ບໍ່ໄດ້ *ປັນຍາ ໒ ຂັ້ນນີ້ ເປັນປັນຍາຫາເຂົ້າກິນ ຫາເງິນ*

---

[1] **ໂຍຊນ໌** ໑ ໂຍຊນ໌ ຈິ່ງມີຣະຍະທາງເທົ່າກັບ ໑໕,໐໐໐ ເມຕຣ໌ ຫຣື ໑໕ ກິໂລເມຕຣ໌

*ຫາທອງ ຫາເຂົ້າຫາຂອງ ເພື່ອມາບໍາບັດທຸກຂ໌ບໍາຣຸງສຸຂຂອງຕົວແລະຄອບຄົວ ປຣະເທສຊາຕິ ເປັນເຫມືອນດາບ ໒ ຄົມ ຖ້າໃຊ້ຖືກກໍໃຫ້ຄຸຕ ຖ້າໃຊ້ຜິດກໍໃຫ້ໂທສຫລາຍ ເຊັ່ນ ຣະເບີດປຣມາຕູພຽງລູກດຽວ ສາມາຖຈະເຮັດໃຫ້ ຄົນຕາຍເປັນຈໍານວນ ສົ-ສາ ຫມື່ນ ເອີ້ນວ່າ ມິຄຸຕອນັນຕ໌ ມີໂທສມຫັນຕ໌*

3. **ກາວນາມຍປັນຍາ** ປັນຍາເກີດຈາກການຈະເຣີນວິປັສສນາກັມມຖານ ມີຢູ່ ໑໘ ຂັ້ນ ຂັ້ນທີ່ ໑໔ ຄື ມັຄຄຍາຕ ຕ້ອງປຜິບັຕິເຖິງຂັ້ນນີ້ ຈຶ່ງຈະສາມາຖພິສູຈນ໌ນຣົກສວັຣຄ໌ໄດ້ ເພາະກິເລສຄືຕົວມິຈສາທິຜຖິ ໔ ຕົວ ຊຶ່ງເອີ້ນວ່າ ທິຜຖິຄຕສັມປຢຸຕຕຈິຕ ໔ ຂາດໄປຢ່າງບໍ່ມີວັນຈະຄືນມາໄດ້ອີກ ຄືເປັນສມຸຈເຉທປຫານ ລະໄດ້ໂດຍເດັດຂາດ ກັບ ວິຈິກິຈສາ ຕົວທີ່ພາໃຫ້ສົງສັຍລັງເລໃຈວ່າ ນຣົກມີແທ້ບໍ່ ສວັຣຄ໌ມີແທ້ບໍ່ ກໍໄດ້ຂາດໄປພ້ອມກັນເມື່ອກິເລສທັ້ງ ໕ ຕົວນີ້ຂາດໄປຈາກຂັນສສັນດານແລ້ວຈຶ່ງຈະພິສູຈນ໌ໄດ້ ແລະຈຶ່ງຈະເຫມີດສົງສັຍ ດັ່ງມີຫລັກຖານປາກົຜຢູ່ ໃນພຣະໄຕຣປີຜົກເຫລັ້ມທີ່ ໑໕ ຫນ້າທີ່ ໑໑ ພຣະພຸທສອົງຄ໌ໄດ້ທຣົງຕັ້ງປັນຫາຖາມເອງແລະຕອບເອງວ່າ

**ໂກ ອິມໍ ປຖວິ ວິເຈສ຺ສຕິ ຢມໂລກຌຸຈ ອິມໍ ສເທວກໍ** ດັ່ງນີ້ເປັນຕົ້ນ

ໃຈຄວາມວ່າ "ໃຜຈະພິສູຈນ໌ແຜ່ນດິນຄືອັຕກາພນີ້ໄດ້ ໃຜຈະພິສູຈນ໌ຢມໂລກຄືອບາຍກູມິທັ້ງ ໔ ໄດ້ ແລະໃຜ ຈະພິສູຈນ໌**มนุสส**[2]ໂລກນີ້ ພ້ອມທັ້ງເທວໂລກໄດ້" ດັ່ງນີ້ ພຣະພຸທສອົງຄ໌ໄດ້ທຣົງຕອບເອງວ່າ

**ເສໂຂ ປຖວິ ວິເຈສ຺ສຕິ ຢມໂລກຌຸຈ ອິມໍ ສເທວກໍ** ດັ່ງນີ້ເປັນຕົ້ນ

ຄວາມວ່າ "ພຣະເສຂບຸຄຄົລ ໗ ຈໍາພວກ ນັບຕັ້ງແຕ່ພຣະອຣິຍບຸຄຄົລຜູ້ຕັ້ງຢູ່ໃນໂສດາປັຕຕິມັຄຄ໌ ເປັນຕົ້ນໄປ ຈຶ່ງຈະພິສູຈນ໌ອບາຍກູມິ ໔ ມີນຣົກ ເປັນຕົ້ນໄດ້" ດັ່ງນີ້ ພຣະອັຕຖກຖາຈາຣຍ໌ຜູ້ຮູ້ພຸທສາສິບາຍໄດ້ແກ້ໄວ້ວ່າ

**ໂສຕາປຕ຺ຕິມຄ຺ຄຌຸກໍ ອາທຶ ກຕ຺ວາ ຢາວ ອຣຫຕ຺ຕມຄ຺ຄຜຖາ ສຕ຺ຕວິໂຣ ເສໂຂ**

ພຣະເສຂບຸຄຄົລ ໗ ຈໍາພວກ ນັບຕັ້ງແຕ່ພຣະອຣິຍບຸຄຄົລຜູ້ຕັ້ງຢູ່ໃນໂສດາປັຕຕິມັຄຄ໌ເປັນຕົ້ນໄປ ຈົນເຖິງ ພຣະອຣິຍບຸຄຄົລຜູ້ຕັ້ງຢູ່ໃນອຣຫັຕຕມັຄຄ໌ເປັນທີ່ສຸດ ຈຶ່ງຈະສາມາຖພິສູຈນ໌ ອບາຍກູມິ ມນຸສສກູມິ ແລະເທວກູມິໄດ້

ຄໍາວ່າ ໂສດາປັຕຕິມັຄຄ໌ ກໍໄດ້ແກ່ ມັຄຄຍາຕ ຄື ຍາຕທີ່ ໑໔ ນັ່ນເອງ ເມື່ອນັກປຜິບັຕິລັມມ໌ໄດ້ຈະ ເຣີນວິປັສສນາກັມມຖານ ຜ່ານຍາຕທີ່ ໑ ມາໂດຍລໍາດັບໆ ຈົນເຖິງຍາຕທີ່ ໑໔ ນີ້ ຈຶ່ງຈະມີຄວາມສາມາຖຄືມີປັນຍາ ພິສູຈນ໌ນຣົກສວັຣຄ໌ ມັຄຄ໌ຜົລນິພພານໄດ້ ໂດຍຈະບໍ່ມີຄວາມສົງສັຍແມ້ແຕ່ນ້ອຍດຽວ

---

[2] **ມນຸສສ** ອ່ານວ່າ ມະ-ນຸດ (ສກ. ມນຸຩຍ, ປ. ມນຸສ຺ສ) ນ. ແປລວ່າ ຄົນ ເຮົາຈັກຂຽນແບບສັນສກິຕໄດ້ວ່າ "**ມນຸຩຍ໌**"

# ບົທ ໔ ທາງໄປເປຕແລະອສຸຣກາຍ



ເປຕ ໄດ້ແກ່ຜູ້ທີ່ຕາຍໄປແລ້ວ ໄປເກີດໃນອບາຍພູມິທີ່ ໔ ຄື ພູມິຂອງເປຕ ເປຕນັ້ນມີ ໑໔ ຈຳພວກ ມີຕັຕຫາຊິຕາເປຕ ປຣທຕູປຊີວິເປຕ ເປັນຕົ້ນ ບາງຈຳພວກປາກເທົ່າຮູເຂັມກໍມີ ບາງຈຳພວກມີເທົ່າໃບຕາລກໍມີ ບາງຈຳພວກ ຖືກໄຟເຜົາຢູ່ເປັນ**ນິຈ**[3]ກໍມີ ບາງຈຳພວກມີໄຟພຸ່ງອອກມາຈາກປາກກໍມີ ບາງຈຳພວກອາສັຍທານທີ່ບຸຄຄົລອື່ນອຸທິສໃຫ້ກໍມີ ເປຕນັ້ນຊາວບ້ານທັ້ງຫລາຍມັກນິຍົມເອີ້ນກັນວ່າ "ຜີຫລອກ"

ອສຸຣກາຍ ມີຮ່າງກາຍໃຫລ່ໂຕກວ່າເປຕ ແຕ່ເປັນ**ພັນສ໌**[4]ດຽວກັນ ເຊັ່ນ ຫມາລາວ ກັບຫມາຝຣັ່ງຕ່າງກໍເປັນຫມາເຫມືອນກັນແຕ່ຕົວໂຕກວ່າກັນເທົ່ານັ້ນ ມັກຢູ່ໃນທີ່ຫນາວເຢັນ ເຊັ່ນ ພູ ປ່າໄມ້ດົງດິບ ທະເລສາປ ເປັນຕົ້ນ

ເຫຕຸທີ່ນຳໄປເກີດເປັນເປຕແລະອສຸຣກາຍ ສ່ວນຫລາຍໄດ້ແກ່ໂລກະທຣິຕັຕຫາ ດັ່ງມີຫລັກຖານຈາກອັຕຖກຖາ ອັຕຖສາລິນີ ຮັບຮອງໄວ້ວ່າ **ເຢກຸຢ່ເຢນ ຫີ ສຕຸຕາ ຕຕຸຫາຍ ເປຕຸຕິວິສຢ໌ ອຸປປຊຊນຸຕິ** ຈິງຢູ່ ສ່ວນຫລາຍສັຕວ໌ທັ້ງຫລາຍຕາຍໄປເກີດເປັນເປຕແລະອສຸຣກາຍ ກໍເພາະໂລກຕັຕຫາ

**ຕົວຢ່າງໃນອດີຕ** ເຊັ່ນ ເປຕຍາຕິພຣະເຈົ້າພິມພິສາຣ ໂລກກິນຂອງທີ່ຈະນຳໄປຖວາຍພຣະ ຕາຍແລ້ວໄດ້ໄປເກີດເປັນເປຕພາກັນທົນທຸກຂ໌ທໍຣມານຢູ່ຕັ້ງດົນ ຫາກໍຈະໄດ້ຮັບສ່ວນບຸນຈາກພຣະເຈົ້າພິມພິສາຣໃນສາສນາຂອງພຣະພຸທສເຈົ້າຂອງເຮົານີ້ແຫລະ

**ຕົວຢ່າງໃນປັຈຈຸບັນ** ມີຕຣະກູລນຶ່ງຢູ່ໃນພາຄອີສານມີບຸຕຣ໌ ໑໐ ຄົນ ບັດນີ້ບຸຕຣ໌ເຫລົ່ານັ້ນຍັງມີຊີວິຕຢູ່ທຸກຄົນ ພໍ່ກັບລູກເຂຍກຳລັງພາກັນປຸກເຮືອນຢູ່ ໔ ຫລັງ ຫລັງທີ່ ໑ ແລ້ວໄປແລ້ວ ຫລັງທີ່ ໔ ມຸງຫລັງຄາແລ້ວ ກຳລັງເລີ້ມປູກະດານ ບັງເອີນກິນຫມາກຄໍ້ສົ້ມໃນຕອນທ່ຽງ ເຮັດໃຫ້ເຈັບທ້ອງ ຖ່າຍບໍ່ຫຢຸດກາຍໃນ ໓ ວັນກໍຕາຍ ພໍຕາຍແລ້ວປາກົຜວ່າມາຫລອກລູກຫລານຕ່າງໆ ນານາ ເຊັ່ນ ຖິ້ມຂອງລົງມາຈາກຂື່ບ້ານ ມີສຽງດັ່ງຕຶງຕັງໆ ເຫມືອນກັບສຽງຄົນຖິ້ມຂອງລົງມາແທ້ໆ ແຕ່ເບິ່ງແລ້ວຂອງບໍ່ມີ ລູກເຂຍເປັນຄົນຄ້າຂາຍ ໄປຊື້ຫນັງງົວມາຕາກໄວ້ທີ່ເລົ້າເຂົ້າ ຍາມມື້ຄືນເດືອນແຈ້ງ ສຽງພັບຫນັງດັ່ງເຫມືອນກັນກັບສຽງຄົນພັບ ຫມາເຫົ່າເຫມິດຄືນ ເຫົ່າຫອນ ເຮັດໃຫ້ຂົນລຸກໄປເຫມິດໂຕ

---

[3] **ນິຈ** ວ. ສເມີໄປ, ສມ່ຳສເມີ, ມັກໃຊ້ວ່າເປັນນິຈໃນຄຳກາສາປາລີ (ປ. ນິຈຸຈ, ສ. ນິຕຸຍ)

[4] **ພັນສ໌** ນ. ເຊື້ອສາຍ, ຫມູ່ຄູ່, ວົງສ໌ວານ, ພີ່ນ້ອງ, ເຊື້ອ, ເຫລົ່າກໍ (ປ. ມຄ. ພນຸຣຸ)

ຂໍ້ນີ້ກໍເປັນຕົວຢ່າງຊີ້ໃຫ້ເຫັນໄດ້ຢ່າງຊັດແນ່ແລ້ວວ່າ ຕາຍດ້ວຍຄວາມຫ່ວງບ້ານ ຫ່ວງລູກ ຫ່ວງຫລານ ຈໍານໍາພາໃຫ້ມາເກີດເປັນເປຕຫລືອສຸຣກາຍ

**ອີກຕົວຢ່າງນຶ່ງ** ເມື່ອ ພ.ສ. ໒໕໐໐ ຢູ່ໃນກຸງເທພຯ ນີ້ແຫລະ ທ່ານຜູ້ນຶ່ງມີໃຈເລື່ອມໃສຢາກຈະເຂົ້າປຜິບັຕິວິປັສສນາ ແຕ່ບັງເອີນມາລົ້ມເຈັບລົງເສັຽກ່ອນ ກ່ອນຈະຕາຍໃຈກໍຫ່ວງບ້ານ ຫ່ວງລູກ ຫ່ວງຫລານແລະຫ່ວງຊັພຍ໌ສົມບັຕິເພາະຍັງ ບໍ່ໄດ້ຈັດການເຣັດພິນັຍກັມມ໌ແບ່ງໃຫ້ລູກໃຫ້ຫລານ ເມື່ອຕາຍແລ້ວ ໄດ້ມາຫລອກລູກໆຫລານໆ ນານາປຣະການ ເຊັ່ນ ສະແດງໃຫ້ເຫັນເປັນຮູປຮ່າງແທ້ໆ ແດ່ ເປີດຜ້າອອກມາແດ່ ເອົາມືມາລູບຫົວແດ່ຢ່າງອ້ອມໄປອ້ອມມາເຫມືດຄືນແດ່ ຕົວຢ່າງນີ້ກໍພໍຊີ້ໃຫ້ເຫັນອີກຂໍ້ນຶ່ງວ່າ ເພາະໂລກຄືຄວາມຫ່ວງສົມບັຕິເປັນເຫຕຸເວລາຕາຍຈຶ່ງໄດ້ມາເກີດເປັນເປຕມາຫລອກ ລູກຫລານ

## ບົທ ໓ ທາງໄປສັຕວ໌ດຽຣລານ



ສັຕວ໌ດຽຣລານ ມີຫລາຍ ເຊັ່ນ ຊ້າງ ມ້າ ງົວ ຄວາຍ ຫມູ ຫມາ ເປັດ ໄກ່ ນົກ ຫນູ ກຸ້ງ ຫອຍ ປູ ປາ ເປັນຕົ້ນ ສ່ວນຫລາຍໂມຫະຄືຄວາມຫລົງເປັນຜູ້ນໍາໄປເກີດ ດັ່ງມີຫລັກຖານປາກົຍຢູ່ໃນອັຕຖກຖາຮັບຮອງໄວ້ວ່າ

**ໂມເຫນ ຫິ ນິຈຈໍ ສມຸນຸຮຸຫໍ ຕິຣຈຸລານໂຍນິ ອຸປປຊຊນຸຕິ**

ຈິງຢູ່ ສັຕວ໌ທັ້ງຫລາຍຕາຍໄປເກີດເປັນສັຕວ໌ດຽຣລານ ເຊິ່ງມີຄວາມລຸ່ມຫລົງຢູ່ເປັນນິຈ ກໍເພາະໂມຫະເປັນຕົວການນໍາໄປດັ່ງນີ້

**ຕົວຢ່າງໃນອດີຕ** ເຊັ່ນ ນາຍໂກຕຸຫລິກະ ເດີນທາງມາແຕ່ໄກລ ມີຄວາມລໍາບາກແລະອິດເມື່ອຍແທ້ວ່າ ພ້ອມທັ້ງຫິວອາຫາຣໃນການເດີນທາງໄກລກັນດາຣດ້ວຍ ເມື່ອມາເຖິງຫມູ່ບ້ານແຫ່ງນຶ່ງໃນວັນນັ້ນມີການສູ່ຂວັນງົວນົມຂອງນາຍໂຄບາລ ໃນເຮືອນຂອງນາຍໂຄບາລ ພຣະປັຈເຈກພຸທລເຈົ້າອົງຄ໌ນຶ່ງມາລັນເປັນນິຕຍ໌ ໃນວັນນັ້ນເມື່ອນາຍໂຄບາລນິມົນຕ໌ພຣະປັຈເຈກພຸທລເຈົ້າລັນແລ້ວແລ້ວ ຈຶ່ງໄດ້ທໍາການນົງຄຸລເຂົ້າປາຍາສເຂົາຈັດແຈງໄວຢ່າງຫລວງຫລາຍ ເມື່ອນາຍໂຄບາລເຫັນສອງສາມີກັຣຍານັ້ນມາ ຈຶ່ງທໍາ7ວາມສົງເຄາະຫ໌ ໂດຍສັ່ງໃຫ້ນໍາເຂົ້າປາຍາສກັບເນຍໃສຈໍານວນຫລາຍໄປໃຫ້

ກັຣຍາຈຶ່ງກ່າວກັບສາມີວ່າ ເມື່ອອ້າຍມີຊີວິຕຢູ່ ນ້ອງກໍຊື່ວ່າມີຊີວິຕຢູ່ ອ້າຍມີຫິວມາດົນແລ້ວ ຂໍອ້າຍຈົ່ງຮັບກິນຕາມຄວາມຕ້ອງການເຖີດ ນາງຈຶ່ງວາງເຂົ້າປາຍາສໄວ້ຕໍ່ຫນ້າຂອງສາມີພ້ອມກັບ**ສັປປິ**[5] ສ່ວນນາງກໍບໍຣິໂພຄສັປປິບໍ່ດີ ແຕ່ນ້ອຍນຶ່ງ

---

[5] **ສັປປິ** (ມຄ. ສປຸປິ) ນ. ເນຍໃສ, ນໍ້າມັນເນຍ

ເທົ່ານັ້ນ ນາຍໂກຕຸຫລິກະບໍຣິໂភຄຫລາຍເກີນໄປເພາະຫິວມາຕັ້ງ ໗-໘ ວັນ ນາຍໂຄບາລເມື່ອໃຫ້ເຂົ້າປາຍາສແກ່ສອງຜົວເມັຽແລ້ວ ຕົນເອງຈຶ່ງເລີ້ມຈະບໍຣິໂភຄ ນາຍໂກຕຸຫລິກະນັ່ງເບິ່ງເຂົາຢູ່ ເຫັນກ້ອນເຂົ້າປາຍາສທີ່ນາຍໂຄບາລປັ້ນໃຫ້ແກ່ນາງ**ສຸນັຂ**[6]ຕົວນັ້ນເຊິ່ງນອນຢູ່ກ້ອງຕັ່ງ ຈຶ່ງຄິດວ່າ ນາງສຸນັຂຕົວນີ້ມີບຸນ ຈຶ່ງໄດ້**ໂភຊນະ**[7] ເຫັນປານນີ້ເນືອງນິຕຍ໌ ຕົກກາງຄືນນາຍໂກຕຸຫລິກະນັ້ນບໍ່ສາມາຖຈະຍັງເຂົ້າປາຍາສໃຫ້ຍ່ອຍໄດ້ ຈຶ່ງທຳກາລະກິຕາຍ ແລ້ວໄດ້ໄປບັງເກີດໃນທ້ອງແຫ່ງນາງສຸນັຂຕົວນັ້ນ ເມື່ອກັຣຍາເຂົາເຜົາສົພສາມີແລ້ວ ກໍໄດ້ທຳການຮັບຈ້າງຢູ່ໃນບ້ານນັ່ນເອງ ໄດ້ເຂົ້າສາຣມາທະນານນຶ່ງ ຫຸງຕັກບາຕຣ໌ຖວາຍປັຈເຈກພຸທລເຈົ້າແລ້ວອຸທິສສ່ວນບຸນໃຫ້ສາມີວ່າ "**ກນຸເຕ ທາສສຸສ ໂວ ປາປຸຕາຕິ**" ທ່ານຂ້ານ້ອຍຂໍກຸສົລຜົລບຸນອັນນີ້ຈົ່ງເຖິງແກ່ທາສຂອງທ່ານເຖີດ ດັ່ງນີ້ ນາງຄິດວ່າ ພຣະຜູ້ເປັນເຈົ້າມາທີ່ນີ້ເປັນປະຈຳໄທຍລັມມ໌ຂອງເຮົາຈະມີຫຣືບໍ່ມີກໍຕາມຊ່າງ ເຮົາໄຫວ້ທ່ານຢູ່ ທຳຄວາມຂອນຂວາຍຢູ່ ຍັງໃຈໃຫ້ເລື່ອມໃສຢູ່ທຸກໆ ວັນຈະໄດ້ບຸນຫລາຍ ຈຶ່ງໄດ້ທຳການຮັບຈ້າງຢູ່ໃນບ້ານນັ້ນເອງ

### ເຣື່ອງສຸນັຂໃຈບຸນ ສ້າງມຫາກຸສົລ ຕາຍໄດ້ໄປເກີດໃນສວັຣຄ໌

ກາຍໃນ ໕-໗ ເດືອນ ນາງສຸນັຂຕົວນັ້ນກໍອອກລູກມາຕົວນຶ່ງ ນາຍໂຄບາລໄດ້ໃຫ້ນ້ຳນົມຂອງງົວນົມຕົວນຶ່ງແກ່ລູກສຸນັຂນັ້ນ ບໍ່ນານປານໃດນັກລູກສຸນັຂຕົວນັ້ນກໍໃຫຍ່ ເມື່ອພຣະປັຈເຈກພຸທລເຈົ້າມາຈັນທ່ານກໍໃຫ້ກ້ອນເຂົ້າແກ່ລູກສຸນັຂຕົວນັ້ນທຸກໆ ວັນ ເພາະໄດ້ອາສັຍກ້ອນເຂົ້າຂອງທ່ານ ລູກສຸນັຂຕົວນັ້ນຈຶ່ງບໍ່ມີຄວາມຮັກໃຄ່ໃນທ່ານຫລາຍ ເມື່ອນາຍໂຄບາລໄປສູ່ທີ່ບຳຣຸງຂອງພຣະປັຈເຈກພຸທລເຈົ້າວັນລະ ໒ ເວລາ ກໍໄດ້ພາສຸນັຂຕົວນັ້ນໄປດ້ວຍທຸກເທື່ອ ເວລາເດີນທາງຜ່ານປ່າກໍເອົາໄມ້ຕີທີ່ພຸ່ມໄມ້ແລະພື້ນດິນໃນທີ່ເຊິ່ງມີສັຕວ໌ຮ້າຍໃນຣະຫວ່າງທາງສົ່ງສຽງວ່າ "ສຸ ສຸ ສຸ" ໓ ເທື່ອເພື່ອຍັງສັຕວ໌ຮ້າຍໃຫ້ໜີໄປ ມື້ນຶ່ງນາຍໂຄບາລໄດ້ກ່າວກັບພຣະປັຈເຈກພຸທລເຈົ້າວ່າ "ພຣະຄຸຕເຈົ້າຜູ້ຈະເຣີນ ຖ້າຍາມໃດຂ້ານ້ອຍບໍ່ມີເວລາວ່າງ ເມື່ອນັ້ນຂ້ານ້ອຍຈະສົ່ງສຸນັຂຕົວນີ້ມາ" ມື້ໃດບໍ່ມີເວລາວ່າງ ເຂົາກໍສົ່ງສຸນັຂຕົວນັ້ນໄປວ່າ "ພໍ່ຈົ່ງໄປຈົ່ງນຳພຣະຜູ້ເປັນເຈົ້າມາ" ດ້ວຍຄຳພຽງເທົ່ານີ້ ສຸນັຂນັ້ນກໍແລ່ນໄປເຖິງທີ່ເຊິ່ງນາຍຕີພຸ່ມໄມ້ແລະພື້ນດິນ ກໍເຫົ່າຂຶ້ນ ໓ ເທື່ອແລ້ວກໍໄປຈົນເຖິງທີ່ຢູ່ຂອງພຣະປັຈເຈກພຸທລເຈົ້າ ເຂົ້າໄປຍັງ**ປັຕຕ**[8]ສາລານັ່ງຢູ່ແລ້ວເຖິງປະຕູປັຕຕສາລາຈຶ່ງເຫົ່າຂຶ້ນ ໓ ເທື່ອ ເພື່ອໃຫ້ທ່ານຮູ້ວ່າຕົນມາແລ້ວ ຈຶ່ງໄດ້ນອນຫມອບຢູ່ ໓ ສ່ວນຂ້າງນຶ່ງ ເມື່ອພຣະປັຈເຈກພຸທລເຈົ້າໄດ້ອອກເດີນທາງໄປ ສຸນັຂກໍຍ່າງເຫົ່າໄປຂ້າງໜ້າໆ ເມື່ອຈະທົດລອງສຸນັຂ ທ່ານຈຶ່ງທຳທ່າຫລົງທາງຍ່າງໄປທາງອື່ນເສັຽ ສຸນັຂຈຶ່ງຟ້າວໄປຢືນເຫົ່າຂວາງໜ້າຂອງທ່ານໄວ້ ແລ້ວນຳທ່ານເມືອມາທາງເດີມອີກ

---

[6] **ສຸນັຂ** (ມຄ. ສຸນຂ) ນ. ໝາ

[7] **ໂភຊນະ** (ມຄ. ໂភຊນ) ນ. ການກິນ, ການກິນເຂົ້າ, ອາຫານ

[8] **ປັຕຕ** (ສ. ປຣຕ, ປ. ປຕຕ) ນ. ປີກ, ຫນັງສື, ໃບໄມ້

ຕໍ່ມາວັນນຶ່ງທ່ານຢ່າງໄປສູ່ທາງອື່ນເຖິງແມ້ສຸນັຂນັ້ນຈະໄປຢືນຂວາງຢູ່ຂ້າງໜ້າກໍບໍ່ເມືອ ເອົາຕີນກະຕຸ້ນສຸນັຂແລ້ວກໍຍ່າງໄປ ສຸນັຂຮູ້ວ່າທ່ານຈະບໍ່ເມືອຈຶ່ງຟ້າວໄປຄາບຜ້ານຸ່ງດຶງມາ ນຳທ່ານມາສູ່ທາງທີ່ຕົນປະສົງຄ໌ອີກ ສຸນັຂນັ້ນໄດ້ຍັງຄວາມຮັກອັນມີກຳລັງໃຫ້ເກີດຂຶ້ນແລ້ວໃນພຣະປັຈເຈກພຸທສເຈົ້ານັ້ນ ດ້ວຍປະການຢ່າງນີ້

ຕໍ່ມາຈີວຣຂອງທ່ານເກົ່າແລ້ວ ນາຍໂຄບາລຈຶ່ງໄດ້ຖວາຍຜ້າສຳຣັບເຮັດຈີວຣແກ່ທ່ານ ທ່ານຈຶ່ງໄດ້ອຳລາໂຍມໄປສູ່ສຖານທີ່ສະບາຍແລ້ວຈະເຮັດຈີວຣ ສຸນັຂໄດ້ຢືນຟັງຄຳຂອງຄົນທັງ ໒ ນັ້ນຢູ່ເໝືອນກັນ ທ່ານໄດ້ເຫາະຂຶ້ນສູ່**ເວຫາສ**[9] ບ່າຍໜ້າຕໍ່ເຂົາຣຄັນຣມາທນ໌ ສຸນັຂຫລ່ຽວເບິ່ງທ່ານຜູ້ກຳລັງເຫາະໄປທາງອາກາສຢືນເຫົ່າຫອນຢູ່ ເມື່ອທ່ານລັບສາຍຕາໄປຫົວໃຈກໍແຕກທຳລາຍລົງ ຄືຕາຍຢູ່ ຓ ທີ່ນັ້ນເອງ

ສຸນັຂສ້າງມຫາກຸສົລໄດ້ໄປເກີດເປັນໂພສກເທພບຸຕຣ໌ (ອ່ານວ່າ ໂພສະກະເທພະບຸດ) ໃນສວັຣຄ໌ຊັ້ນດາວດຶງສ໌ໄດສເວີຍສົມບັຕິໃຫຍ່ ກໍເພາະເປັນສັຕວ໌ມີຄວາມເຫັນຖືກ ແລະບໍ່ຄິດໂກງ ດ້ວຍເຫຕຸດັ່ງນີ້

ຊື່ວ່າສັຕວ໌ດິຣັຈສານທັ້ງຫລາຍນັ້ນ ເປັນສັຕວ໌ທີ່ມີຊາຕິຊື່ຕົງ ບໍ່ຄິດໂກງ ສ່ວນມນຸຍ໌ນັ້ນໃຈຄຶດແນວນຶ່ງ ປາກເວົ້າແນວນຶ່ງ ບໍ່ຕົງກັນ ເພາະເຫຕຸນັ້ນແລ ນາຍເປສສະ ຜູ້ເປັນບຸຕຣ໌ຂອງນາຍ**ຄວານ**[10]ຊ້າງຈຶ່ງໄດ້ກ່າວໄວ້ ເຊິ່ງປາກົຍຢູ່ໃນພຣະໄຕຣປິຜົກເຫລັ້ມທີ່ ໑໓ ໜ້າທີ່ ໔ ວ່າ

**ຄຫາຕາຣ໌ຫຕ໌ ການຸເຕ ອຫິທ໌ ມນຸສ໌ສາ ອຸຕຸຕານກໍຫເຫຕ໌ ການຸເຕ ຢຫິທ໌ ປສໂວ**

ຂ້າແຕ່ພຣະອົງຄ໌ຜູ້ຈະເຣີນ ແທ້ຈິງ ຂັນຣປັນຈກຄືມນຸຍ໌ນີ້ **ຣົກຊັຜ**[11]ໆ ຂ້າແຕ່ພຣະອົງຄ໌ຜູ້ຈະເຣີນ ແທ້ຈິງຂັນຣປັນຈກ ຄືສັຕວ໌ຂອງລ້ຽງນີ້ຕື້ນ ດັ່ງນີ້

ທ່ານສາທຸຊົນຜູ້ໃຈບຸນທັ້ງຫລາຍຖ້າເຮົາໄປຕົກນຣົກກໍດີ ໄປເກີດເປັນເປຕແລະອສຸຣກາຍກໍດີ ໄປເກີດເປັນສັຕວ໌ດິຣັຈສານກໍດີ ເຮົາບໍ່ມີໂອກາສທີ່ຈະສ້າງຄວາມດີເຊັ່ນກັບມນຸຍ໌ ຈະຮັກສາສີລຈະໄປຖວາຍທານຈະໄປໄຫວ້ພຣະສູຕມົນຕ໌ຈະໄປຈະເຣີນສມຖກັມມຖານແລະວິປັສສນາກັມມຖານກໍບໍ່ໄດ້ເປັນ ເພາະກັມມ໌ໜັກ ກັມມ໌ມີກຳລັງແຮງປິດບັງໄວ້ ຈຶ່ງເປັນເຫຕຸໃຫ້ສັພສັຕວ໌ພາກັນວົນວຽນຢູ່ໃນຫ່ວງກິເລສແລະກອງທຸກຂ໌ຢ່າງເປັນຕາຢ້ານທີ່ສຸດ ເພາະດັ່ງນັ້ນຂໍມວລພຸທສບໍຣິພັທຈົ່ງພາກັນເຮັດບຸນໃຫ້ຫລາຍໆ ເຖິດໃນເມື່ອເຮົາມີໂອກາສ ຈະໄດ້ບໍ່ພລາດທ່າເສັຽທີໄປເກີດໃນທຸຄຕິ ເຮົາຈະໄດ້ເປັນຜູ້ມີໂຊຄດີໄປບັງເກີດໃນສຸຄຕິໂລກສວັຣຄ໌ ອັນປຣາສຈາກທຸກຂ໌ກັຍຕ່າງໆ ເລີ້ມຕັ້ງຕົ້ນຊີວິຕຕັ້ງແຕ່ບັດນີ້ເປັນຕົ້ນໄປເຖີດເພາະຍັງບໍ່ສວຍ ຍັງຈະມີໂອກາສປິດປະຕູອບາຍໄດ້ຢູ່ ຈະບໍ່ໄດ້ເກີດເສັຽໃຈໃນກາຍຫລັງ ແລະຈະບໍ່ໄດ້ເຖິງບາງອື້

---

[9] **ເວຫາສ** (ມຄ. ເວຫາສ, ສ. ວິຫາຍສ) ນ. ອາກາສ, ຟ້າ

[10] **ຄວານ** (ໄທຍ ຄວານ ) ນ. ຜູ້ບັງຄັບຊ້າງ, ຜູ້ລ້ຽງຝຶກຊ້າງ

[11] **ຣົກຊັຜ** ອ່ານວ່າ ຣົກ-ຊັດ ນ. ຣົກຄືປ່າ, ປ່າຕຶບ, ຣົກຍຸ້ງ

ເພາະບໍ່ດົນ ເຮົາກໍຈະພາກັນເມືອບ້ານເກົ່າຢູ່ ແລະຂະນະນີ້ບາງຄົນກໍເປັນຄືຈັ່ງຕົ້ນໄມ້ໃກ້ຝັ່ງຢູ່ແລ້ວ ຣໍຖ້າຄວາມຕາຍຢູ່ທຸກຄືນວັນ ຣິບຖໍ່ຣິບພາຍເຖີດ ຕະເວັນຈະສວຍ ຕລາດຈະວາຍ ສາຍບົວຈະເນົ່າ ສົມເດັຈພໍ່ກໍໄດ້ທຣົງແນະນຳສັ່ງສອນໄວ້ແລ້ວເຊິ່ງປຣາກົຍຢູ່ໃນພຣະໄຕຣປິຜົກ ເຫລັ້ມທີ່ ໑໕ ຫນ້າທີ່ ໘໗ ວ່າ

**ອຸຜຖຫາຖ ນິສີທາຖ ໂກ ອຕຸໂຖ ສຸປິເຕນ ໂວ**

**ອຕຸຣານံ ຫີ ກາ ນິທຸທາ ສລຸລວິທຸສານຣຸປຸປຕံ**

**ອຸຜຖຫາຖ ນິສີທາຖ ທລຸຫໍ ສິກຸຂຖ ສນຸຕິຢາ**

ເຊີນທ່ານທັ້ງຫລາຍລຸກຂຶ້ນເຖີດ ເຊີນທ່ານທັ້ງຫລາຍນັ່ງເຖີດ ທ່ານຈະມົວນອນຣຝັນເອົາປຣະໂຍຊນ໌ຫຍັງໃນເມື່ອຊາວໂລກທັ້ງຫລາຍກຳລັງຖືກລູກສຣ ຄືຄວາມຍາກຈົນຊົ່ວຮ້າຍສຽບແທງປິ່ນປີ້ຢູ່ແບບນີ້ ເຊີນທ່ານທັ້ງຫລາຍລຸກຂຶ້ນເຖີດ ທ່ານຈະມົວນອນຫລັບທັບສິຫລີຢູ່ເຮັດຫຍັງລະ ທ່ານທັ້ງຫລາຍຈົ່ງຟ້າວລົງມືສຶກສາປຜິບັຕິເພື່ອສັນຕິສຸຂເສັຽບັດນີ້ເຖີດ ດັ່ງນີ້

# ບົທ ໔ ທາງໄປມນຸຫຍ໌



ມນຸຫຍ໌ ຕາມຄວາມຫມາຍທາງກາສາບາລີມີໄດ້ຫລາຍນັຍ ເຊັ່ນ ຜູ້ມີໃຈສູງ, ຜູ້ຮູ້ສິ່ງທີ່ເປັນປຣະໂຍຊນ໌ແລະສິ່ງທີ່ບໍ່ເປັນປຣະໂຍຊນ໌, ຜູ້ເປັນເຫລົ່າກໍຂອງຜູ້ຮູ້, ຜູ້ທີ່ຈະໄດ້ເກີດມາເປັນມນຸຫຍ໌ ກໍເພາະໄດ້ອາສັຍລັມມ໌ຂອງມນຸຫຍ໌ ໄດ້ແກ່ສີລ ໕ ແລະກຸສົລກັມມບົຖ ໑໐ ເປັນຄຸຕລັມມ໌ທີ່ຈະເສກສັຣປັ້ນປຸງໃຫ້ເປັນຄົນ ຖ້າໃຜຂາດລັມມ໌ທັ້ງ ໔ ຫມວດນີ້ ກໍຈັດວ່າເປັນຄົນບໍ່ເຕັມຄົນ ເຫຕຸດັ່ງນີ້ທ່ານຈຶ່ງແບ່ງມນຸຫຍ໌ອອກເປັນ ໕ ຈຳພວກຄື:

## ໑. ມນຸສຸສເນຣຍິໂກ: ມນຸຫຍ໌ສັຕວ໌ນຣົກ

ໄດ້ແກ່ ມນຸຫຍ໌ຜູ້ດຸຮ້າຍຫຍາບຄາຍ ທ່ຽວຂ້າສັຕວ໌ຕັດຊີວິຕເຂົາ ທ່ຽວຈີ້ທ່ຽວປລົ້ນເອົາຊັພຍ໌ສົມບັຕິຂອງຜູ້ອື່ນມາເປັນຂອງຕົນດ້ວຍອາການທາຣຸຕດຸຮ້າຍ ເຊັ່ນ ຂ້າເຈົ້າຊັພຍ໌ຕາຍແດ່ ທຸບຕີຈົນບາດເຈັບສາຫັສແດ່ ຂົ່ມຂືນແລ້ວຂ້າແດ່ ບຽດບຽນຜູ້ອື່ນສັຕວ໌ອື່ນ ທໍຣມານຜູ້ອື່ນສັຕວ໌ອື່ນ ໂດຍອາການທາຣຸຕດຸຮ້າຍຫຍາບຄາຍນານາປຣະການ ຣວມຄວາມວ່າເປັນຄົນໄຮ້ສີລລັມມ໌ ບໍ່ມີມນຸຫຍລັມມ໌ ຄື ສີລ ໕ ປະຈຳຕົວເລີຍ ເປັນມິຈສາທິຜຖິ ທ່ານຈຶ່ງໄດ້ຂນານນາມວ່າ **ມນຸສຸສເນຣຍິໂກ** ຄືເປັນມນຸຫຍ໌ແຕ່ຊື່ ສ່ວນຄວາມປະພຶຕທາງ ກາຍ ວາຈາ ໃຈ ນັ້ນເລວທຣາມຕ່ຳຊ້າດຸຮ້າຍຫຍາບຄາຍເຫມືອນກັບສັຕວ໌ນຣົກຈັ່ງນັ້ນ

## ໑. ມນຸສສເປໂຕ: ມນຸษຍ໌ເປຕ

ໄດ້ແກ່ມນຸษຍ໌ຜູ້ຫລາຍເກີນໄປດ້ວຍຄວາມໂລກ ຫລາຍເກີນໄປດ້ວຍຕັณຫາ ມັກລັກເລັກຂໂມຍນ້ອຍ ໂລກເອົາຂອງຜູ້ອື່ນມາເປັນຂອງຕົນ ແຍ່ງຊີງ ວິ່ງຣາວ ເປັນຕົ້ນ ແມ້ພວກທີ່ທ່ຽວຂໍທານນິບາດແຜລຫລາຍກໍສົງເຄາະຫ໌ເຂົ້າປຣະເພທນີ້ດ້ວຍ

## ໓. ມນຸສສຕິຣຈ຺ຉາໂນ: ມນຸษຍ໌ສັຕວ໌ດິຣັຈฉານ

ໄດ້ແກ່ມນຸษຍ໌ທີ່ຂວາງສີລ ຂວາງລັມມ໌ ມີໂມຫະຄືຄວາມຫລົງຫລາຍ ບໍ່ຮູ້ຈັກບາປ ບໍ່ຮູ້ຈັກບຸญ ບໍ່ຮູ້ຈັກຄຸณ ບໍ່ຮູ້ຈັກໂທษ ບໍ່ຮູ້ຈັກປຣະໂຍຊນ໌ແລະບໍ່ແມ່ນປຣະໂຍຊນ໌ ບໍ່ຮູ້ຈັກຄຸณຂອງຜູ້ມີຄຸณ ເຊັ່ນ ບິດາມາຣດາ ຄູຣບາອາຈາຣຍ໌ ເປັນຕົ້ນ ເປັນມນຸษຍ໌ໄຮ້ສີລລັມມ໌ ດື່ມເຫລົ້າເມົາສຸຣາ ສູບຝິ່ນ ກິນກັญຊາ ເຮັດກຣະທຳທາງ ກາຍ ວາຈາ ໃຈ ກໍຂວາງໆ ຜິດທຳນອງຄອງລັມມ໌ ທ່ານຈຶ່ງໄດ້ຂນານນາມວ່າ ມນຸສສຕິຣຈ຺ຉາໂນ ແປລວ່າ ຜູ້ໄປຂວາງ ຄືຢ່າງເຊໄປ-ເຊມາ ບໍ່ໄດ້ຢ່າງຕັ້ງຕົວເຫມືອນຄົນ ຄົນດິຣັຈฉານກໍລັນນັ້ນ ເຮັດຫຍັງກໍຂວາງລັມມ໌ຂວາງວິນັຍ ຄືຜິດສີລລັມມ໌ຢູ່ສເມີໆ

## ໔. ມນຸສສພູໂຕ: ມນຸษຍ໌ແທ້ໆ

ຄືເປັນຄົນເຕັມຄົນ ໄດ້ແກ່ ບຸຄຄົລຜູ້ເກີດມາເປັນຄົນແລ້ວ ໄດ້ຮັກษາສີລ ໕ ມັ່ນເປັນນິຕຍ໌ ບໍ່ໄດ້ຂາດ ບໍ່ໄດ້ປຣະມາທຕໍ່ສີລ ເພາະຖືວ່າເປັນມນຸษຍລັມມ໌ ຄືເປັນລັມມ໌ປະຈຳມນຸษຍ໌ ລັມມ໌ທີ່ທຳຄົນໃຫ້ເປັນຄົນ ແຕ່ບໍ່ໄດ້ບຳເພັญກຸສົລຈຣິຍາຢ່າງອື່ນອີກ ເຊັ່ນ ບໍ່ໄດ້ໃຫ້ທານ ບໍ່ໄດ້ຟັງລັມມ໌ ເປັນຕົ້ນ ມນຸษຍ໌ຢ່າງນີ້ທ່ານຂນານນາມວ່າ ມນຸສສພູໂຕ ຄື ເປັນຄົນເຕັມຄົນ ເພາະມີຄຸณລັມມ໌ຂອງຄົນຄືສີລ ສີລ ແປລວ່າ ສຽຣ ຄື ຫົວ ຖ້າຄົນຂາດສີລ ກໍຄືຄົນຂາດຫົວ ຫົວຂາດນັ້ນເອງ ເພາະຂາດຈາກຄຸณລັມມ໌ຂອງຄວາມເປັນຄົນ

## ໕. ມນຸສສເທໂວ: ມນຸษຍ໌ເທວດາ

ໄດ້ແກ່ມນຸษຍ໌ຜູ້ມີສີລ ໕ ມັ່ນເປັນນິຕຍ໌ແລ້ວຍັງໄດ້ພຍາຍາມບຳເພັญກຸສົລເພີ່ມພູນບາຣມີຢູ່ເລື້ອຍໆ ເຊັ່ນ ໃຫ້ທານ ຟັງລັມມ໌ ຮຽນລັມມ໌ປຝິບັຕິລັມມ໌ ໄຫວ້ພຣະ ສູຕມົນຕ໌ ມີຫິຣິ ຄືຄວາມລະອາຍບາປ ມີໂອຕັປປະ ຄືຄວາມສະດຸ້ງກົວຕໍ່ຜົລແຫ່ງບາປຢູ່ສເມີເອີ້ນວ່າ ເປັນຜູ້ມີໃຈສູງຄືເທວດາ ເພາະປະກອບດ້ວຍເທວລັມມ໌ ໆ ປຣະການ ຄື

- ບຳຣຸງລ້ຽງມາຣດາບິດາ
- ປະພຶຕອ່ອນນ້ອມຖ່ອມຕົນຕໍ່ບຸຄຄົລຜູ້ຈະເຣີญໃນຕຣະກູລ
- ເວົ້ານົວຫົວມ່ວນ ອ່ອນຫວານ ນຸ່ມນວລ
- ລະຄວາມສໍ່ສຽດ

- ຮັກສາຄໍາສັດຍ໌
- ລະຄວາມຕຣະຫນີ່ຫນຽວແນ່ນ
- ບໍ່ໂກຣ

ມນຸຫຍ໌ຜູ້ມີຄຸຕສົມບັຕິເຊັ່ນນີ້ ທ່ານຂນານນາມວ່າ **ມນຸສຸສເທໂວ**

ເທົ່າທີ່ສະແດງມານີ້ ກໍພໍຊີ້ໃຫ້ເຫັນໄດ້ເດັ່ນຊັດແລ້ວວ່າ ສີລທັມມ໌ເທົ່ານັ້ນເປັນເຄື່ອງວັດບຸຄຄົລ ເປັນເຄື່ອງແບ່ງແຍກບຸຄຄົລໃຫ້ມີປຣະເພທຕ່າງໆ ດັ່ງທີ່ໄດ້ກ່າວມາແລ້ວຂ້າງຕົ້ນນັ້ນ ຖ້າຜູ້ໃດໄຣ້ສີລທັມມ໌ ຜູ້ນັ້ນກໍຊື່ວ່າເປັນຄົນບໍ່ເຕັມຄົນແດ່ ເປັນຄົນເປຕແດ່ ເປັນຄົນອສຸຣກາຍແດ່ ເປັນຄົນນຣົກແດ່ ເປັນຄົນດີຣັຈສານແດ່ ຖ້າຜູ້ໃດມີສີລທັມມ໌ ມີກັລຍາຕທັມມ໌ ມີວັທນທັມມ໌ອັນດີງາມ ຜູ້ນັ້ນກໍຊື່ວ່າ ເປັນຄົນເຕັມຄົນ ເປັນຄົນແທ້ໆ ແລະເປັນຄົນເທວດາ

ເພາະດັ່ງນັ້ນທາງໄປມນຸຫຍ໌ຈຶ່ງໄດ້ແກ່ສີລ ໕ ເຊິ່ງເປັນມນຸຫຍທັມມ໌ ຄືທັມມ໌ປະຈໍາມນຸຫຍ໌ ໃນພຣະບາລີທ່ານເອີ້ນວ່າ "ອຣິຍທັມມ໌" ເຊັ່ນ ຄໍາວ່າ "ອຣິຍທມ຺ເມ ກິໂຕ ນໂຣ" ນໍຣະຊົນຜູ້ຕັ້ງຢູ່ໃນອຣິຍທັມມ໌ ໄດ້ແກ່ບຸຄຄົລຜູ້ຕັ້ງຢູ່ໃນສີລ ໕ ດັ່ງນີ້

# ບົທ ໕ ທາງໄປສວັຣຄ໌

ຄໍາວ່າ "ສວັຣຄ໌" ນີ້ ຕາມຣູປສັພທ໌ກາຫາບາລີ ແປລວ່າ ເລີສດ້ວຍດີກໍໄດ້ ແປລວ່າ ມີອາຣົມຕ໌ດີງາມກໍໄດ້ ແລະແປລວ່າ ເປັນທີ່ຂ້ອງຢູ່ຕິດຢູ່ແຫ່ງສັຕວ໌ທັງຫລາຍກໍໄດ້



ສຣຸປຄວາມວ່າ ສວັຣຄ໌ ໄດ້ແກ່ໂລກເປັນທີ່ຢູ່ຂອງເທວດາ ມີແຕ່ ຣູປ ສຽງ ກລິ່ນ ຣົສ ໂຜຜັພພະອັນດີງາມ ຄື ເປັນຂອງທິພຍ໌ ດີເລີສປະເສີກກວ່າເມືອງມນຸຫຍ໌ຫລາຍເທົ່າ ໃນ**ກາມາວຈຣ**[12]ມີຢູ່ ໖ ຊັ້ນ ຄື

1. ສວັຣຄ໌ຊັ້ນຈາຕຸມຫາຣາຊ
2. ສວັຣຄ໌ຊັ້ນດາວດຶງສ໌
3. ສວັຣຄ໌ຊັ້ນຍາມາ
4. ສວັຣຄ໌ຊັ້ນດຸສິຕ
5. ສວັຣຄ໌ຊັ້ນນິມມານະຣະດີ

[12] **ກາມາວຈຣ** ອ່ານວ່າ "ກາ-ມາ-ວະ-ຈະ-ຣະ" (ປ. ກາມ ອວຈຣ) ຫາກອອກສຽງກາຫາລາວຈະອ່ານວ່າ "ກາມາວະຈອນ" ແປລວ່າ: ທ່ອງທ່ຽວໃນກາມກົພ.

6. ສວັຣຄ໌ຊັ້ນປະຣະນິມມິຕະວະສະວັສດີ

ສວັຣຄ໌ທັ້ງ ໖ ຊັ້ນນີ້ ຕັ້ງຢູ່ຈາກກັນໄປຕາມລຳດັບ ທີ່ສະແດງມານີ້ປາກົຝຢູ່ໃນພຣະໄຕຣປີຝົກເຫລັ້ມທີ່ ໑໙ ຫນ້າທີ່ ໕໖໑

## ຣະຍະທາງໄປສວັຣຄ໌

ຣະຍະທາງໄປສວັຣຄ໌ນີ້ ທ່ານກ່າວໄວ້ໃນຄັມກີຣ໌ໂລກທີປສາຣວ່າ:

**ອສຸຣປຸຣໂຕ ທີ ຢາວ ມນຸສຸສກູມິໂຕ ຈຕຸຣາສີຕິໂຢຊນສຫສຸສານີ ໂຫນຸຕິ** ຕັ້ງແຕ່ເມືອງອສູຣ ເຖີງເມືອງມນຸຫຍ໌ 84,000 ໂຍຊນ໌

**ມນຸສຸສກູມິໂຕ ຢາວ ຈາຕຸມຸມຫາຣາຊິກາ ເທວຈຕຸຕາຮີສ ໂຢຊນສຫສຸສານີ** ຕັ້ງແຕ່ມນຸຫຍ໌ ເຖີງຊັ້ນຈາຕຸມຫາຣາຊ 42,000 ໂຍຊນ໌

**ຕຖາ ຈາຕຸມຸມຫາຣາຊິກໂຕ ຢາວ ຕາວຕິສາ** ຕັ້ງແຕ່ຊັ້ນຈາຕຸມຯ ເຖີງຊັ້ນດາວດຶງສ໌ກໍ 42,000 ໂຍຊນ໌ ເທົ່າກັນ

**ອິຕິ ອສຸຣປຸຣໂຕ ຢາວ ຕາວຕິສປຸຣາ ໂຢຊນານໍ ເອກລ ກຸຂໍ ອມຫຸຕໍ ອຝກຸສຫສຸສຝຈ** ໂດຍເຫຕຸນີ້ຕັ້ງແຕ່ເມືອງອສູຣ ເຖີງເມືອງດາວດຶງສ໌ ຈຶ່ງເປັນຣະຍະທາງ 168,000 ໂຍຊນ໌

**ປກວິຕລໂຕ ຢາວ ຕາວຕິສາ ປນ ຈຕຸຣາສີຕິ ໂຢຊນສຫສຸສານີ** ຖ້າຈະຄິດແຕ່ພື້ນດິນຂຶ້ນໄປ ເຖີງຊັ້ນດາວດຶງສ໌ ເປັນຣະຍະທາງຕັ້ງ 84,000 ໂຍຊນ໌

**ຕາວຕິສໂຕ ຢາວ ຍາມາ ໂຢຊນານໍ ຈຕຸລກຸຂໍ ຕິນຫຸຕໍ ຈຕຸສຫສຸສໍ ຈຕຸສຕຝຈ** ຕັ້ງແຕ່ຊັ້ນດາວດຶງສ໌ ເຖີງຊັ້ນຍາມາ ເປັນຣະຍະທາງ 434,000 ໂຍຊນ໌

**ຕທາ ຍາມໂຕ ຢາວ ຕຸສິຕາ ສຕຸຕລກຸຂໍ ຈຕຸຣາສີຕິສຫສຸສໍ ອຝກຸສະຝຈ** ຕັ້ງແຕ່ຊັ້ນຍາມາ ເຖີງຊັ້ນດຸສິຕ ເປັນຣະຍະທາງຕັ້ງ 7,448,000 ໂຍຊນ໌

**ຕຸສິໂຕ ຢາວ ນິມຸມານຣຕິໂຕ ເອກາທສລກຸຂານິ ຕິນຫຸຕໍ ປຝຈສຫສຸສໍ ທວິສຝຈ** ຕັ້ງແຕ່ຊັ້ນດຸສິຕ ເຖີງຊັ້ນນິມມານະຣະດີ ເປັນຣະຍະທາງໄກລຕັ້ງ 1,135,200 ໂຍຊນ໌

**ນິມມານຣຕິໂຕ ຢາວ ວສວຕຕິໂຕ ຈຸທຸທສລກຂານິ ອຏກຸ ນຫຸຕານີ ປຏຈສທສສ ຨສຕຏຈ** ຕັ້ງແຕ່ຊັ້ນນິມມານະຣະດີ ເຖິງຊັ້ນປະຣະນິມມິຕະວະສະວັສດີ ເປັນຣະຍະທາງຕັ້ງ 1,485,600 ໂຍຊນ໌

**ວສວຕຕິໂຕ ຢາວ ປກຸມຊຊານກູມິໂຕ ອຏກຸາຣສລກຂຕານີ ຕີນຫຸຕ໌ ຨສທສສຏຈ** ຕັ້ງແຕ່ຊັ້ນປະຣະນິມມິຕະວະສະວັສດີ ເຖິງຊັ້ນປຖົມຊານ ຄືເຖິງຊັ້ນພຣົຫ໌ມປາຣິສັຊຊາ ເປັນຣະຍະທາງ 1,836 ,000 ໂຍຊນ໌

ມຫາກຸສົລ ຏ ນຳສັພສັຕວ໌ໄປເກີດໃນສວັຣຄ໌ ຜ ຊັ້ນ ຊັ້ນໃດຊັ້ນນຶ່ງ ມຫາ ແປລວ່າ ຫລາຍ ກຸສົລ ແປລວ່າ ບຸຌ ຕໍ່ກັນເຂົ້າເປັນມຫາກຸສົລ ແປລວ່າ ບຸຌຫລາຍຢ່າງ ເຊັ່ນ ໃຫ້ທານ ຟັງລັມມ໌ ຮຽນລັມມ໌ ຈະເຣີຌກັມມຖານ ທອດກຖິນ ທອດຜ້າປ່າສ້າງໂບສຖ໌ສ້າງວິຫາຣ ສ້າງສາລາການປະຣຽຌ ສ້າງພຣະພຸທຣຣູປ ສ້າງໂຕະຫມູ່ບູຊາ ສ້າງໂຮງຮຽນ ສ້າງໂຮງພຍາບາລ ສ້າງກຸຜິ ຂຸດບໍ່ນ້ຳ ຕັກບາຕຣ໌ ບູຊາດ້ວຍດອກໄມ້ລູປທຽນຂອງຫອມ ເຄື່ອງອາກຣຕ໌ ແລະບູຊາດ້ວຍປັຈຈັຍ ໔ ຄື ຈີວຣ ບິຕຫບາຕ ເສນາສນະ ຢາແກ້ໂຣຄ ເປັນຕົ້ນ ຈົນບໍ່ສາມາຖຈະນັບໄດ້ ເອີ້ນມຫາກຸສົລທັງນັ້ນ

## ມຫາກຸສົລມີ ຏ ປຣະກາຣ

1. **ໂສມນສສສຫຄຕ໌ ຌາຕສມປຢຸຕຕ໌ ອສງຂາຣິກ໌** ເວລາເຮັດບຸຌມີຄວາມດີໃຈ ປັຕຖນານິພພານ ເຮັດບຸຌເອງ
2. **ໂສມນສສສຫຄຕ໌ ຌາຕສມປຢຸຕຕ໌ ສສງຂາຣິກ໌** ເວລາເຮັດບຸຌມີຄວາມດີໃຈ ປັຕຖນານິພພານ ມີຜູ້ຊັກຊວນຈຶ່ງເຮັດບຸຌ
3. **ອຸເປກຂາສຫຄຕ໌ ຌາຕສມປຢຸຕຕ໌ ອສງຂາຣິກ໌** ເວລາເຮັດບຸຌມີໃຈເສີຍໆ ປັຕຖນານິພພານ ເຮັດບຸຌເອງ
4. **ອຸເປກຂາສຫຄຕ໌ ຌາຕສມປຢຸຕຕ໌ ສສງຂາຣິກ໌** ເວລາເຮັດບຸຌມີໃຈເສີຍໆ ປັຕຖນານິພພານ ມີຜູ້ຊັກຊວນຈຶ່ງເຮັດບຸຌ
5. **ໂສມນສສສຫຄຕ໌ ຌາຕວິປປຢຸຕຕ໌ ອສງຂາຣິກ໌** ເວລາເຮັດບຸຌມີຄວາມດີໃຈ ບໍ່ໄດ້ປັຕຖນານິພພານ ເຮັດບຸຌເອງ
6. **ໂສມນສສສຫຄຕ໌ ຌາຕວິປປຢຸຕຕ໌ ສສງຂາຣິກ໌** ເວລາເຮັດບຸຌມີຄວາມດີໃຈ ບໍ່ໄດ້ປັຕຖນານິພພານ ມີຜູ້ຊັກຊວນຈຶ່ງເຮັດບຸຌ
7. **ອຸເປກຂາສຫຄຕ໌ ຌາຕວິປປຢຸຕຕ໌ ອສງຂາຣິກ໌** ເວລາເຮັດບຸຌມີໃຈເສີຍໆ ບໍ່ປັຕຖນານິພພານ ເຮັດບຸຌເອງ
8. **ອຸເປກຂາສຫຄຕ໌ ຌາຕວິປປຢຸຕຕ໌ ສສງຂາຣິກ໌** ເວລາເຮັດບຸຌມີໃຈເສີຍໆ ບໍ່ປັຕຖນານິພພານ ມີຜູ້ຊັກຊວນຈຶ່ງເຮັດບຸຌ

## ອະທິບາຍ

1. ເວລາເຮັດບຸນ ມີຄວາມດີໃຈ ປັຕຖນາໃຫ້ໄດ້ມັຄຄ໌ຜົລນິພພານ ຄິດເຮັດບຸນເອງ ບໍ່ມີໃຜມາຊັກຊວນໃຫ້ເຮັດ ຜູ້ທີ່ເຮັດບຸນເຊັ່ນນີ້ໄດ້ຜົລດີຫລາຍ ຄືຜົລບຸນນີ້ສາມາຖຈະນຳໄປເກີດເປັນມນຸษຍ໌ກໍໄດ້ ນຳໄປເກີດເປັນເທວດາກໍໄດ້ ຖ້າໄປເກີດເປັນມນຸษຍ໌ຈະມັ່ງຄັ່ງສົມບູຣณ໌ ຮັ່ງມີ ບໍ່ອຶດບໍ່ຢາກ ບໍ່ທຸກຂ໌ ບໍ່ຍາກ ແລະມີປັญญາຫລາຍ ຫາກອອກຈະເຣີນສມຖກັມມຖານ ກໍຈະໄດ້ບັຣລຸຊານ ມີປฐົມຊານ ເປັນຕົ້ນ ຫາກອອກຈະເຣີນວິປັສສນາກັມມຖານ ກໍຈະໄດ້ບັຣລຸມັຄຄ໌ຜົລນິພພານໃນຊາຕິນັ້ນ

2. ເວລາເຮັດບຸນ ມີຄວາມດີໃຈ ປັຕຖນາໃຫ້ໄດ້ມັຄຄ໌ຜົລນິພພານ ບໍ່ໄດ້ຄິດເຮັດບຸນເອງ ມີຜູ້ຊັກຊວນຈຶ່ງເຮັດບຸນ ຜູ້ທີ່ເຮັດບຸນເຊັ່ນນີ້ ໄດ້ຜົລເປັນທີ່ ໒ ຄືສາມາຖຈະໄປບັງເກີດເປັນມນຸษຍ໌ກໍໄດ້ ໄປບັງເກີດເປັນເທວດາກໍໄດ້ ຖ້າໄປເກີດເປັນມນຸษຍ໌ຈະຮັ່ງມີມັ່ງມີສຣິສຸຂ ແລະມີປັญญາຫລາຍ ແຕ່ເປັນທີ່ ໒ ຍັງມີຄົນທີ່ເກັ່ງກວ່າฉລາດກວ່າ ຫາກອອກຈະເຣີນສມຖກັມມຖານ ກໍຈະໄດ້ຊານໃນຊາຕິນັ້ນ ຫາກອອກຈະເຣີນວິປັສສນາກັມມຖານ ກໍຈະໄດ້ບັຣລຸມັຄຄ໌ຜົລນິພພານໃນຊາຕິນັ້ນ

3. ເວລາເຮັດບຸນ ມີໃຈເฉຍໆ ປັຕຖນານິພພານ ຄິດເຮັດບຸນເອງ ບໍ່ມີໃຜມາຊັກຊວນໃຫ້ເຮັດບຸນ ຜູ້ທີ່ເຮັດບຸນເຊັ່ນນີ້ ໄດ້ຜົລເປັນທີ່ ໓ ສາມາຖຈະນຳໄປເກີດເປັນມນຸษຍ໌ກໍໄດ້ ນຳໄປເກີດເປັນເທວດາກໍໄດ້ ຖ້າໄປເກີດເປັນມນຸษຍ໌ຈະຮັ່ງມີ ມັ່ງຄັ່ງສົມບູຣณ໌ມັ່ງມີສຣິສຸຂ ແລະຈະມີສຕິປັญญາດີເປັນທີ່ ໓ ຍັງມີຄົນດີກວ່າ ເກັ່ງກວ່າ ແຫລມກວ່າ ຫາກອອກຈະເຣີນສມຖກັມມຖານ ຈະໄດ້ຊານ ຫາກອອກຈະເຣີນວິປັສສນາກັມມຖານ ຈະໄດ້ມັຄຄ໌ຜົລນິພພານໃນຊາຕິນັ້ນ

4. ເວລາເຮັດບຸນ ມີໃຈເฉຍໆ ປັຕຖນານິພພານ ມີຜູ້ຊັກຊວນຈຶ່ງເຮັດບຸນ ຜູ້ທີ່ເຮັດບຸນເຊັ່ນນີ້ໄດ້ຜົລເປັນທີ່ ໔ ສາມາຖນຳໄປເກີດເປັນມນຸษຍ໌ກໍໄດ້ ໄປເກີດເປັນເທວດາກໍໄດ້ ຖ້າໄປເກີດເປັນມນຸษຍ໌ຈະຮັ່ງມີ ມັ່ງຄັ່ງສົມບູຣณ໌ ແລະມີສຕິປັญญາດີເປັນທີ່ ໔ ຖ້າອອກຈະເຣີນສມຖກັມມຖານຈະໄດ້ຊານ ຖ້າອອກຈະເຣີນວິປັສສນາກັມມຖານ ຈະໄດ້ມັຄຄ໌ຜົລນິພພານໃນຊາຕິນັ້ນ ມຫາກຸສົລທັງ ໔ ດວງນີ້ ຢູ່ໃນເກຕฑ໌ດີມາກຕາມລຳດັບໆ ກັນ ຖ້າຈະເຮັດບຸນຂໍໃຫ້ໄດ້ຢ່າງນີ້ດີຫລາຍ

5. ໃນເວລາເຮັດບຸນ ມີຄວາມດີໃຈ ບໍ່ປັຕຖນາມັຄຄ໌ຜົລນິພພານ ຄິດເຮັດບຸນເອງ ບໍ່ມີໃຜຊັກຊວນໃຫ້ເຮັດບຸນ ຜູ້ທີ່ເຮັດບຸນເຊັ່ນນີ້ ຂາດປັญญາ ໄດ້ຜົລເປັນທີ່ ໕ ສາມາຖຈະນຳໄປເກີດເປັນມນຸษຍ໌ກໍໄດ້ ໄປເກີດເປັນເທວດາກໍໄດ້ ຖ້າໄປເກີດເປັນມນຸษຍ໌ຈະຮັ່ງມີມັ່ງມີສຣິສຸຂ ແຕ່ຂາດປັญญາ ຄື ບໍ່ມີປັญญາທີ່ຈະໄດ້ຊານ ໄດ້ມັຄຄ໌ຜົລນິພພານ ຫມາຍຄວາມວ່າ ຖ້າອອກຈະເຣີນສມຖກັມມຖານກໍຈະບໍ່ໄດ້ຊານ ຖ້າອອກຈະເຣີນວິປັສສນາ

ກັມມຖານກໍຈະບໍ່ໄດ້ບັຣລຸມັຄຄ໌ຜົລນິພພານໃນຊາຕິນັ້ນ ແຕ່ຈະເປັນປັຈຈັຍໃຫ້ໄດ້ຊານໃຫ້ໄດ້ມັຄຄ໌ຜົລນິພພານໃນຊາຕິຕໍ່ໄປໄດ້

6. ເວລາເຮັດບຸນ ມີຄວາມດີໃຈ ບໍ່ປັຕຖນາມັຄຄ໌ຜົລນິພພານ ມີຜູ້ຊັກຊວນຈຶ່ງເຮັດບຸນ ຜູ້ທີ່ເຮັດບຸນເຊັ່ນນີ້ຂາດປັນຍາ ໄດ້ຜົລເປັນທີ່ ໕ ສາມາຖຈະໄປເກີດເປັນມນຸษย໌ກໍໄດ້ ໄປເກີດເປັນເທວດາກໍໄດ້ ຖ້າໄປເກີດເປັນມນຸษย໌ກໍຈະຮັ່ງມີ ມັ່ງຄັ່ງສົມບູຣຕ໌ ມັ່ງມີສຣີສຸຂ ແຕ່ຂາດປັນຍາ ຄືບໍ່ມີປັນຍາທີ່ຈະໄດ້ຊານ ໄດ້ມັຄຄ໌ຜົລນິພພານໃນຊາຕິນັ້ນ ແຕ່ຈະເປັນປັຈຈັຍໃຫ້ໄດ້ມັຄຄ໌ຜົລນິພພານຫຣືໄດ້ຊານໃນຊາຕິຕໍ່ໄປ

7. ໃນເວລາເຮັດບຸນ ມີໃຈເສີຍໆ ບໍ່ປັຕຖນານິພພານ ເຮັດບຸນເອງ ບໍ່ມີໃຜຊັກຊວນໃຫ້ເຮັດບຸນ ຜູ້ທີ່ເຮັດບຸນເຊັ່ນນີ້ໄດ້ທີ່ ໗ ຂາດປັນຍາ ສາມາຖຈະນຳໄປເກີດເປັນມນຸษย໌ກໍໄດ້ ໄປເກີດເປັນເທວດາກໍໄດ້ ຖ້າເກີດເປັນມນຸษย໌ກໍຈະຮັ່ງມີມັ່ງມີສຣີສຸຂ ແຕ່ບໍ່ມີປັນຍາຈະໄດ້ບັຣລຸຊານ ມັຄຄ໌ຜົລນິພພານໃນຊາຕິນັ້ນ ແຕ່ຈະເປັນປັຈຈັຍໃຫ້ໄດ້ບັຣລຸຊານ ມັຄຄ໌ຜົລນິພພານໃນຊາຕິຕໍ່ໆ ໄປໄດ້

8. ເວລາເຮັດບຸນ ມີໃຈເສີຍໆ ບໍ່ປັຕຖນານິພພານ ມີຜູ້ຊັກຊວນຈຶ່ງເຮັດບຸນ ຜູ້ທີ່ເຮັດບຸນເຊັ່ນນີ້ ໄດ້ຜົລເປັນທີ່ ໘ ສາມາຖນຳໄປເກີດເທິງສວັຣຄ໌ ເປັນເທວດາກໍໄດ້ ເປັນມນຸษย໌ກໍໄດ້ ຖ້າເກີດເປັນມນຸษย໌ກໍຈະມັ່ງມີສຣີສຸຂຮັ່ງມີ ບໍ່ອຶດບໍ່ຢາກ ບໍ່ທຸກຂ໌ບໍ່ຍາກ ແຕ່ຂາດປັນຍາທີ່ຈະນຳພາໃຫ້ໄດ້ຊານມັຄຄ໌ຜົລນິພພານໃນຊາຕິນັ້ນ ແຕ່ຈະເປັນປັຈຈັຍອຳນວຍຜົລໃຫ້ໄດ້ມັຄຄ໌ຜົລນິພພານ ຫຣືໄດ້ຊານໃນກົພຕໍ່ໆ ໄປໄດ້ຢູ່

ມຫາກຸສົລ ໔ ຂໍ້ຂ້າງລຸ່ມນີ້ດີຢູ່ ເວລາເຮັດບຸນບໍ່ປັຕຖນາເອົາປັນຍາ ຈຶ່ງເຮັດໃຫ້ຂາດປັນຍາໄປ ເມື່ອຂາດປັນຍາກໍບໍ່ສາມາຖບັຣລຸຊານ ມັຄຄ໌ຜົລນິພພານໄດ້ໃນຊາຕິນັ້ນ ແຕ່ຈະເປັນປັຈຈັຍອຳນວຍຜົລໃຫ້ໄດ້ມັຄຄ໌ຜົລນິພພານ ຫຣືໄດ້ຊານໃນກົພຕໍ່ໆ ໄປໄດ້ຢູ່

ມຫາກຸສົລ ໘ ດວງນີ້ແຫລະ ຈະນຳບຸຄຄົລໄປເກີດເປັນມນຸษย໌ຫຣືເປັນເທວດາ ເຫຕຸດັ່ງນັ້ນ ທາງສາຍທີ່ ໕ ນີ້ຈຶ່ງໄດ້ຊື່ວ່າ ທາງໄປສວັຣຄ໌ ເຊິ່ງໄດ້ແກ່ ມຫາກຸສົລ ໘ ດັ່ງມີອັຕຖາທິບາຍທີ່ໄດ້ບັຣຍາຍມາແບບນີ້

ສ່ວນຕົວຢ່າງໃນເຣື່ອງນີ້ກໍມີຫລາຍ ເຊັ່ນ **ມັຏກຸກຸຕຫລີ**[13]ເທພບຸຕຣ໌ ໄດ້ຍັງໃຈໃຫ້ເລື່ອມໃສໃນພຣະພຸທສເຈົ້າ ຕາຍແລ້ວໄດ້ໄປບັງເກີດໃນສວັຣຄ໌ ແລະຕິຕບາລບຸຣຸษ ໄດ້ຮ່ວມອນຸໂມທນາໃນກກຶນຂອງທ່ານ**ເສຏກີ**[14] ຕາຍແລ້ວໄດ້ໄປບັງເກີດໃນສວັຣຄ໌ ນັນທິຍມານົພໄດ້ສ້າງສາລາຖວາຍພຣະພຸທສເຈົ້າ ຕາຍແລ້ວກໍໄດ້ໄປບັງເກີດໃນສວັຣຄ໌ເຊັ່ນດຽວກັນ ທັ້ງນີ້ກໍເພາະມຫາກຸສົລທີ່ຕົນໄດ້ເຮັດໄວ້ເປັນປັຈຈັຍໂດຍແທ້

---

[13] **ມັຏກຸກຸຕຫລີ** ອ່ານວ່າ "ມັດ-ຖະ-ກຸນ-ທະ-ລີ"

[14] **ເສຏກີ** ອ່ານວ່າ "ເສດຖີ" ນ. ຄົນຮັ່ງມີ, ຄົນມີຊັພຍ໌

# ບົທ ໕ ທາງໄປພຣົຫ໌ມໂລກ



ທາງໄປພຣົຫ໌ມໂລກ ໄດ້ແກ່ສມຖກັມມການ ມີອາຣົມຕ໌ ໔໐ ແບ່ງອອກເປັນ ໆ ຫມວດ ຄື ກສິຕ ໑໐ ອນຸສສຕິ ໑໐ ພຣົຫ໌ມວິຫາຣ ໔ ອາຫາເຣປຜິກູລສັຍຍາ ໑ ຈຕຸຣາຕຸວວັຕຖານ ໑ ເຊິ່ງມີຄວາມພິສດາຣ ໄດ້ຂຽນໄວ້ອີກເຫລັ້ມນຶ່ງຕ່າງຫາກ ໂດຍໃຊ້ຊື່ວ່າ "ຈິຕຕະກາວນາ" ຫຣື "ລັມມ໌ປຜິບັຕິ" ແລະອີກເຫລັ້ມນຶ່ງໄດ້ຂຽນເປັນທຳນອງປຸຈສາວິສັຊນາ ໃຫ້ຊື່ວ່າ "ຄຳຖາມ-ຄຳຕອບ ເຣື່ອງວິປັສສນາກັມມການ" ດັ່ງນັ້ນ ໃນເຫລັ້ມນີ້ຈະຂໍຍົກໄວ້ບໍ່ນຳມາສະແດງໄວ້ໃນທີ່ນີ້ອີກ ທ່ານຜູ້ປຣະສົງຄ໌ຈະທຣາບກໍໂຜດຕິດຕາມຫາເບິ່ງໄດ້ໃນຫນັງສືດັ່ງທີ່ກ່າວມາແລ້ວນັ້ນ

ສຣຸປຄວາມວ່າທັ້ງ ໆ ຫມວດຣວມເປັນ ໔໐ ຂໍ້ນີ້ ເປັນອາຣົມຕ໌ຂອງສມຖກັມມການ ຜູ້ທີ່ຈະເຈຣີນກັມມການເຫລົ່ານີ້ຂໍ້ໃດຂໍ້ນຶ່ງ ເຊັ່ນ ກາວນາວ່າ "ເກສາ ໂລມາ ນ໐າ ທນ຺ຕາ ຕໂຈ" ເປັນຕົ້ນ ຈົນໄດ້ບັຣລຸຊານມີປກົມຊານເປັນຕົ້ນ ເມື່ອຕາຍແລ້ວຈຶ່ງໄດ້ໄປເກີດໃນພຣົຫ໌ມໂລກຊັ້ນໃດຊັ້ນນຶ່ງ ຕາມສົມຄວຣແກ່ຊານຂອງຕົນໆ ຖ້າຜູ້ໃດຕ້ອງການໄປເກີດພຣົຫ໌ມໂລກກໍຕ້ອງຈະເຣີນສມຖກັມມການຈົນໄດ້ຊານກ່ອນ ຈຶ່ງຈະໄປໄດ້

ທາງສາຍທີ່ ໑ ເຖິງສາຍທີ່ ໕ ນີ້ ມີຢູ່ກ່ອນພຣະພຸທສເຈົ້າເກີດຂຶ້ນໃນໂລກແລ້ວ ໃນພຸທສສາສນາກໍມີ ນອກພຸທສສາສນາກໍມີ ເຊັ່ນ ອາສາຣດາບົສ ອຸທກດາບົສ ຜູ້ເປັນອາຈາຣຍ໌ຂອງພຣະພຸທສເຈົ້າ ເປັນຕົ້ນ ໄດ້ເຄີຍເດີນທາງສາຍນີ້ມາແລ້ວ ຜູ້ທີ່ເດີນທາງສາຍນີ້ເຖິງແມ້ວ່າຈະປຜິບັຕິໄດ້ດີຈົນໄດ້ບັຣລຸຊານ ໄດ້ບັຣລຸອກິຍຍາແລ້ວກໍເສື່ອມໄດ້ ເຊັ່ນ ພຣະເທວທັຕເປັນຕົວຢ່າງ ແລະຖ້າຫມົດບຸຍແລ້ວກໍຍັງຈະເມືອມາສູ່ອບາຍກູມີໄດ້ ດັ່ງຕົວຢ່າງຕໍ່ໄປນີ້ ຄື ແມ່ໄກ່ຟັງລັມມ໌

ມີເຣື່ອງເລົ່າໄວ້ວ່າ ໃນການແຫ່ງພຣະພຸທສເຈົ້ານາມວ່າ ກກຸສັນລະ ແມ່ໄກ່ຕົວນຶ່ງ ຢູ່ໃນທີ່ໃກ້ອາສົນສາລາ ແມ່ໄກ່ຕົວນັ້ນໄດ້ຟັງສຽງປຣະກາສລັມມ໌ຂອງກິກຂຸຜູ້ເປັນນັກປຜິບັຕິລັມມ໌ອົງຄ໌ນຶ່ງ ກຳລັງສາລຍາຍເຣື່ອງວິປັສສນາກັມມການຢູ່ ຖືກເຫລວຕົວນຶ່ງຂ້າ ຕາຍຈາກຊາຕິນັ້ນແລ້ວ ໄດ້ເກີດເປັນພຣະຣາຊທິດານາມວ່າ ອຸພພຣີ ໄດ້ອອກບວຊໃນສຳນັກຂອງປຣິພາຊິກາທັ້ງຫລາຍ ວັນນຶ່ງນາງໄດ້ເຂົ້າໄປສູ່ກຸຜິທອດພຣະເນຕຣ໌ເຫັນຫມູ່ຫນອນແລ້ວ ໄດ້ຈະເຣີນສມຖກັມມການໂດຍເອົາຫນອນເປັນອາຣົມຕ໌ ເອີ້ນວ່າ **ປຸຮຸວກສັຍຍາ**[15] ໄດ້ບັຣລຸປກົມຊານ ຕາຍຈາກຊາຕິນັ້ນໄດ້ໄປເກີດ

---

[15] **ປຸຮຸວກສັຍຍາ** ອ່ານວ່າ "ປຸ-ລຸ-ວະ-ກະ-ສັນຍາ"

ໃນພຣົຫ໌ມໂລກ ຈຸຕິຈາກພຣົຫ໌ມໂລກໄດ້ມາເກີດໃນຕຣະກູລເສຜກີ ຕໍ່ມາບໍ່ນານປານໃດ ກໍຕາຍໄປເກີດເປັນນາງລູກສຸກຣ ໃນກຸງຣາຊຄຣືຫ໌ ໃນກາລແຫ່ງພຣະພຸທສເຈົ້າຂອງເຮົານີ້

ພຣະສາສດາ ໄດ້ທອດພຣະເນຕຣ໌ເຫັນນາງລູກສຸກຣນັ້ນ ຈຶ່ງທຣົງແຢ້ມພຣະໂອຫ໌ ພຣະອານົນທ໌ເຖຣະໄດ້ທູລຖາມພຣະພຸທສອົງຄ໌ຈຶ່ງໄດ້ຕຣັສບອກຂໍ້ຄວາມນັ້ນທັງຫມົດ ກິກຂຸທັງຫລາຍມີພຣະອານົນທ໌ເປັນປຣະມຸຂໄດ້ສດັບເຣື່ອງນັ້ນແລ້ວ ຕ່າງກໍພາກັນເກີດຄວາມສັງເວຊສລົດໃຈຫລາຍ

ພຣະສາສດາທຣົງຍັງຄວາມສັງເວຊສລົດໃຈໃຫ້ເກີດຂຶ້ນແກ່ກິກຂຸເຫລົ່ານັ້ນແລ້ວ ເພື່ອຈະທຣົງປຣະກາສໂທສແຫ່ງຣາຄະຕັຕຫາ ປະທັບຢືນຢູ່ໃນຣະຫວ່າງຫົນທາງນັ້ນເອງ ໄດ້ທຣົງກາສິຕພຣະຄາຖາເຫລົ່ານີ້ວ່າ

**ຢຖາປິ ມູເລ ອນຸປທຸທເວ ທຨ໌ເຫ**

**ຉິນ໌ໂນຫີ ຣຸກໂຂ ປຸນເຣວ ຣູຫຕິ**

**ເອວມ໌ປິ ຕຕຸຫານຸສເຢ ອນູຫເຕ**

**ນິພຸພຕຸຕຕີ ທຸກຂມິທໍ ປຸນປ໌ປຸນໍ**

ດັ່ງນີ້ເປັນຕົ້ນ ແປລເປັນໃຈຄວາມວ່າ ຕົ້ນໄມ້ ເມື່ອຮາກບໍ່ມີອັນຕຣາຍຍັງໝັ້ນຄົງ ເຖິງຈະຖືກບຸຄຄົລຕັດແລ້ວກໍຍັງງອກຂຶ້ນໄດ້ອີກຢູ່ ແມ້ລັນໃດທຸກຂ໌ກໍລັນນັ້ນ ຄື ເມື່ອຕັຕຫານຸສັຍອັນບຸຄຄົລຍັງກຳຈັດບໍ່ໄດ້ແລ້ວຍ່ອມເກີດຂຶ້ນໄດ້ຢູ່ຕລອດໄປ ເຫມືອນກັນຢ່າງນັ້ນ ໆ

ກະແສແຫ່ງຕັຕຫາ ໓໖ ອັນໄຫລໄປໃນອາຣົມຕ໌ເປັນທີ່ພໍໃຈ ເປັນຂອງກລ້າ ຍ່ອມມີແກ່ບຸຄຄົລໃດ ຄວາມດຳຣິທັງຫລາຍອັນໃຫຍ່ ອາສັຍຣາຄະ ຍ່ອມນຳບຸຄຄົລນັ້ນຜູ້ມີທິຜຖິຊົ່ວໄປ ກະແສແຫ່ງຕັຕຫາທັງຫລາຍຍ່ອມໄຫລໄປໃນອາຣົມຕ໌ທັງປວງ ຕັຕຫາຄືເຖົາວັລຍ໌ແຕກຂຶ້ນແລ້ວຕັ້ງຢູ່ ກໍທ່ານທັງຫລາຍເຫັນຕັຕຫານັ້ນເປັນດັ່ງເຖົາວັລຍ໌ ເກີດແລ້ວຈຶ່ງພາກັນຕັດຮາກເສັ່ງດ້ວຍປັນຍາເຖີດ ໂສມນັສທັງຫລາຍທີ່ຊ່ານໄປແລະເປື້ອນຕັຕຫາຄືຢາງຫນຽວຍ່ອມມີແກ່ສັຕວ໌ສັຕວ໌ເຫລົ່ານັ້ນອາສັຍຄວາມສຳຣາຍ ຈຶ່ງເປັນຜູ້ສແວງຫາຄວາມສຸຂ ນໍຣະຊົນເຫລົ່ານັ້ນແລ ຍ່ອມເປັນຜູ້ເຂົ້າເຖິງຄວາມເກີດແລະຄວາມແກ່ ຫມູ່ສັຕວ໌ຖືກຕັຕຫາຜູ້ທຳຄວາມດິ້ນຣົນລ້ອມໄວ້ແລ້ວຍ່ອມກະເສືອກກະສົນເຫມືອນກະຕ່າຍທີ່ຖືກນາຍພຣານດັກໄດ້ແລ້ວຈັ່ງນັ້ນ ຫມູ່ສັຕວ໌ຜູ້ຂ້ອງຢູ່ໃນສັງໂຍຊນ໌ແລະກິເລສເປັນເຄື່ອງຂ້ອງຢູ່ຍ່ອມພາກັນເຂົ້າເຖິງທຸກຂ໌ຢູ່ເລື້ອຍໆ ເປັນເວລາຊ້ານານ ຫມູ່ສັຕວ໌ຖືກຕັຕຫາຜູ້ທຳຄວາມດິ້ນຣົນລ້ອມໄວ້ແລ້ວ ຍ່ອມກະເສືອກກະສົນເຫມືອນກັນກັບກະຕ່າຍທີ່ນາຍພຣານດັກໄດ້ແລ້ວຈັ່ງນັ້ນ ເພາະເຫຕຸນັ້ນ ຜູ້ເຫັນກັຍໃນວັຜຜສົງສາຣຫວັງລັມມ໌ເປັນທີ່ສຳຣອກກິເລສແກ່ຕົນຄວຣບັຣເທົາ ຄວຣກຳຈັດ ຄວຣນຳອອກ ຄວຣຖິ້ມຄວຣລະຕັຕຫາຜູ້ກະທຳຄວາມດິ້ນຣົນນັ້ນເສັ່ງດ້ວຍຍານາຕມີໂສດາປັຕຕິມັຄຄຍານາຕເປັນຕົ້ນ ດັ່ງນີ້

ຝ່າຍນາງລູກສຸກຣຕົວນັ້ນ ຕາຍຈາກຊາຕິນັ້ນໄດ້ໄປເກີດໃນຣາຊຕຣະກູລໃນສຸວັຕກູມິ ຕາຍຈາກນັ້ນເກີດໃນກຸງພາຣາຕສີ ຕາຍຈາກນັ້ນເກີດໃນເຮືອນພໍ່ຄ້າມ້າທີ່ທ່າສຸປປາຣກະ ຕາຍຈາກນັ້ນເກີດໃນເຮືອນຂອງນາຍເຮືອທີ່ທ່າຄາວິຣະ ຕາຍຈາກນັ້ນເກີດໃນເຮືອນຂອງອິສຣຊົນໃນເມືອງອນຸຣາຊບຸຣີ ຕາຍຈາກນັ້ນເກີດເປັນຣິດາໃນເຮືອນຂອງກຸຍູມພີຊື່ສຸມນະໃນເພກກັນຕຄາມ ໃນທິສທັກນິຕຂອງເມືອງນັ້ນ ມີຊື່ວ່າສຸມນາຕາມຊື່ຂອງກຸຍູມພີ ຕໍ່ມາບິດາຂອງນາງ ໄດ້ພາຍ້າຍໄປສູ່ແຄວ້ນທີພວາປີຢູ່ໃນບ້ານຊື່ມຫາມຸນິຄາມຯ ອຳມາຕຍ໌ຂອງພຣະເຈົ້າທຸຍກຸຄາມຕີນາມວ່າ **ລກຸຕຍກອຕິມພຣະ** (ອ່ານເປັນການາລາວວ່າ ລະກຸນະຕະກະອະຕິມະພະຣະ) ໄປທີ່ບ້ານ ນັ້ນດ້ວຍກຣຕິຍກິຈບາງຢ່າງ ເຫັນນາງແລ້ວທຳການມົງຄຸລຢ່າງໃຫຍ່ໄດ້ພານາງໄປສູ່ບ້ານມຫາປຸຕຕຄາມ

ຍາມນັ້ນພຣະມຫາອຕຸລເຖຣະຜູ້ຢູ່ໃນມຫາວິຫາຣຊື່ໂກຍັບຣພົຕ ທ່ຽວໄປບິຕຫບາຕໃນບ້ານນັ້ນ ຢືນຢູ່ທີ່ປະຕູເຮືອນຂອງນາງ ເຫັນນາງແລ້ວຈຶ່ງກ່າວກັບກິກຂຸທັງຫລາຍວ່າ ຜູ້ມີອາຍຸທັງຫລາຍ ນາງລູກສຸກຣເຖິງຄວາມເປັນກັຣຍາຂອງມຫາອຳມາຕຍ໌ຊື່**ລກຸຕຍກອຕິມພຣະ**ແລ້ວ ໂອ ນ່າອັສຈັຣຍ໌ຈິງ ນາງຟັງຄຳນັ້ນແລ້ວເພິກກົພໃນອດີຕຂຶ້ນໄດ້ເມື່ອຣະລຶກຊາຕິໄດ້ ໃນຂຕະນັ້ນ ນາງໄດ້ມີຄວາມສັງເວຊສລົດໃຈເກີດຂຶ້ນ ອ້ອນວອນສາມີບວຊໃນສຳນັກພຣະເຖຣີຜູ້ປະກອບດ້ວຍພລະ ໕ ດ້ວຍອິສຣິຍຍົສຢ່າງໃຫຍ່ ໄດ້ຟັງກຖາພັຕນາມຫາສຕິປັຢຖານສູຕຣ໌ ໃນຕິສສມຫາວິຫາຣໄດ້ສຳເຣັຈໂສດາປັຕຕິຜົລຯ

ກາຍຫລັງເມື່ອພຣະເຈົ້າທຸຍກຸຄາມຕີທຣົງປຣາບ**ທມິຊ**[16]ໄດ້ແລ້ວ ພຣະນາງສຸມນາເຖຣີ ໄປສູ່ບ້ານເພກກັນຕຄາມເຊິ່ງເປັນທີ່ຢູ່ຂອງມາຣດາບິດາຢູ່ໃນບ້ານນັ້ນ ໄດ້ຟັງອາສີວິສູປມສູຕຣ໌ໃນກັລລກມຫາວິຫາຣ ບັຣລຸພຣະອຣຫັນຕ໌ແລ້ວ

ໃນວັນປຣິນິພພານ ນາງອັນພວກກິກຂຸຕີຊັກຖາມແລ້ວໄດ້ເລົ່າປຣະວັຕິທັງຫມົດນີ້ຢ່າງລະອຽດແກ່ກິກຂຸຕີສົງພ໌ແລ້ວສົນທນາກັບພຣະມຫາຕິສສເຖຣະ ຜູ້ກ່າວບົທແຫ່ງຣັມມ໌ ຜູ້ມີ**ປກຕິ**[17]ຢູ່ໃນມຕຫລາຣາມ ຕ ທ່າມກາງກິກຂຸສົງພ໌ຜູ້ປຣະຊຸມກັນແລ້ວ ກ່າວວ່າ

ໃນກາລກ່ອນ ຂ້າພເຈົ້າຕາຍຈາກມນຸຍ໌ແລ້ວເກີດເປັນແມ່ໄກ່ ຖືກເຫລວຕັດຫົວໃນອັຕຕກາພນັ້ນ ໄດ້ໄປເກີດໃນກຸງຣາຊຄຣຶຫ໌ແລ້ວອອກບວຊໃນສຳນັກຂອງປຣິພາຊິກາທັງຫລາຍ ຈະເຣີຍສມຖກັມມຖານ ໄດ້ບັຣລຸປຖົມຊານຕາຍແລ້ວໄດ້ໄປເກີດໃນພຣົຫ໌ມໂລກ ຈຸຕິຈາກນັ້ນໄດ້ມາເກີດໃນຕຣະກູລເສຍຖີ ຕາຍຈາກນັ້ນໄດ້ໄປເກີດເປັນສຸກຣຕາຍຈາກນັ້ນໄປສູ່ສຸວັຕກູມິ ຕາຍຈາກນັ້ນໄປເກີດເມືອງພາຣາຕສີ ຕາຍຈາກນັ້ນໄປເກີດທ່າສຸປປາຣກະ ຕາຍຈາກນັ້ນໄປເກີດທ່າຄາວິຣະ ຕາຍຈາກນັ້ນໄປເກີດເມືອງອນຸຣາຊບຸຣີ ຕາຍຈາກນັ້ນໄປເກີດບ້ານເພກກັນຕຄາມ ຂ້າພເຈົ້າໄດ້ເກີດເຖິງ ໑໓ ອັຕຕກາພອັນສູງໆ ຕ່ຳໆ ຢ່າງນີ້ ດ້ວຍເຫຕຸດັ່ງນີ້

---

[16] **ທມິຊ** (ປ. ທມິຊ ອ່ານວ່າ "ທະ-ມິ-ລະ" ເປັນແບບລາວວ່າ "ທະ-ມິນ") ນ. ຊົນຊາຕິນຶ່ງຢູ່ໃນອິນເດັຽທາງກາຄໃຕ້. ວ. ຮ້າຍ, ດຸຮ້າຍ

[17] **ປກຕິ** (ປ. ປກຕິ ອ່ານວ່າ "ປະ-ກະ-ຕິ" ອອກສຽງເປັນການາລາວວ່າ "ປົກກະຕິ"

ບັດນີ້ ຂ້າພເຈົ້າໄດ້ເກີດໃນອັຕຕະກາພອັນອຸກກຣິບຜ໌ແລ້ວ "ສພ຺ເພປີ ອປ຺ປມາເທນ ສມ຺ປາເທຖ" ຂໍທ່ານທັງຫລາຍແມ້ທັງຫມົດ ຈົງຍັງລັມມ໌ທີ່ເປັນກຸສົລທັງຫລາຍໃຫ້ເຖິງພ້ອມດ້ວຍຄວາມບໍ່ປຣະມາທເຖີດ ດັ່ງນີ້ ໄດ້ຍັງບໍຣິບັທ ໔ ໃຫ້ສັງເວຊສລົດໃຈ ແລ້ວກໍປຣິນິພພານ

ຕາມຕົວຢ່າງນີ້ ພໍຊີ້ໃຫ້ເຫັນໄດ້ເດັ່ນຊັດແລ້ວວ່າ ຜູ້ທີ່ຈະເຣີນສມຖກັມມກຖານຈົນໄດ້ຊານແລ້ວ ຍັງເມືອໄປເກີດໃນອບາຍກູມີໄດ້ອີກ ທັງນີ້ກໍເປັນເພາະກິເລສຍັງມີຢູ່ ກາຣຈະເຣີນສມຖກັມມກຖານຈົນໄດ້ຊານນັ້ນ ເປັນພຽງຂົມກິເລສໄວ້ຊົ່ວຄຣາວເທົ່ານັ້ນ ຍັງລະກິເລສບໍ່ໄດ້ໂດຍເດັດຂາດ ຈຶ່ງຈຳເປັນຕ້ອງເມືອມາສູ່ອບາຍກູມີໄດ້ອີກ ດັ່ງຫລັກຖານໃນວິກັງຄບາລີຮັບຮອງຄວາມຂໍ້ນີ້ໄວ້ວ່າ

**ອກຸຂິຕຸຕາ ປຸຍຸຍເຕເຊນ ກາມຣູປຄຕິ ຄຕາ**

**ກວຄຸຄມ຺ປີ ຈ ສມ຺ປຕຸຕາ ປຸນ ຄຈ຺ຈນ຺ຕິ ທຸຄຸຄຕິ**

ດ້ວຍອຳນາຈແຫ່ງບຸຍທີ່ຕົນໄດ້ກະເຮັດໄວ້ແລ້ວ ສັຕວ໌ທັງຫລາຍຈຶ່ງໄດ້ໄປເກີດໃນພຣົຫ້ມໂລກ ເຖິງກວັຄພຣົຫ້ມ ແລ້ວກໍຍັງເມືອມາສູ່ທຸຄຕິໄດ້ອີກ ດັ່ງນີ້

ເພາະດັ່ງນັ້ນ ຂໍສາລຸຊົນທັງຫລາຍ ຈົງຢ່າພາກັນປຣະມາທແລະນອນໃຈຢູ່ ພຽງແຕ່ເດີນທາງສາຍທີ່ ໔, ໕, ໖, ກໍຍັງບໍ່ສາມາຖຈະພາເຮົາພົ້ນຈາກກິເລສແລະກອງທຸກຂ໌ໄດ້ ຍັງບໍ່ພົ້ນໄປຈາກອບາຍກູມີໄດ້ຢ່າງແນ່ນອນ ເຜີຍານໃດ ພລາດຍາມໃດ ປຣະມາທຍາມໃດ ຫມົດບຸຍຍາມໃດ ເມື່ອນັ້ນ ເຮົາກໍຈະຕ້ອງຢ້ອນເມືອມາສູ່ອບາຍໄດ້ອີກ ດັ່ງຕົວຢ່າງທີ່ໄດ້ເລົ່າໃຫ້ຟັງມາແລ້ວນັ້ນເປັນພຍານ ເຮົາຍັງຮູ້ສຶກວ່າ ມີປະຕູອບາຍຄອຍໄວ້ທຸກຍາມ ***ໃນເມື່ອເຮົາປຣະມາທຂາດສຕິ ເພາະເຮົາປິດປະຕູອບາຍຍັງບໍ່ໄດ້ ຈົງພາກັນຮີບຖໍ່ຮີບພາຍຕະເວັນຈະສວຍ ຕລາດຈະວາຍ ສາຍບົວຈະເນົ່າ ຖ້າຈະຖໍ່ຈະພາຍກໍຈົງຮີບພາກັນແກ້ໂຊ່ເສັ່ງແຕ່ບັດນີ້ ຖ້າໂຊ່ບໍ່ແກ້ ກຸນແຈບໍ່ໄຂ ເຮົາກໍພາຍເຮືອໄປບໍ່ໄດ້ເປັນແນ່ໆ ຈົງພາຍໄປເຖີດ ຖໍ່ໄປເຖີດ ພາຍໄປເຖີດ ຖໍ່ໄປເຊິ່ງສຳເກົາທອງລຳນີ້ຈົນກວ່າຈະເຖິງພຣະນິພພານ ຈະໄດ້ມີຄວາມສຸຂສຳຣາຍຢ່າງທີ່ສຸດ....***

# ບົດ ໆ ທາງໄປນິພພານ



**ນິພ຺ພານ໌ ປຣມ໌ ສຸຂ໌** ພຣະນິພພານເປັນສຸຂຢ່າງຍອດ ຄືເປັນຍອດສຸຂ

ຄຳວ່າ **"ຍອດ"** ນັ້ນມີຢູ່ ໆ ຄື:

1. ຍອດໂຣຄ ໄດ້ແກ່ຄວາມຫິວ **ຊິຄຈ຺ຈາ ປຣມາໂຣຄາ** ຄວາມຫິວເປັນໂຣຄຢ່າງຍອດ
2. ຍອດລາກ ໄດ້ແກ່ຄວາມບໍ່ມີໂຣຄ **ອາໂຣຄ຺ຢາປຣມາ ລາກາ** ຄວາມບໍ່ມີໂຣຄເປັນຍອດລາກ
3. ຍອດຊັພຍ໌ ໄດ້ແກ່ຄວາມສັນໂດษ ຄືຮູ້ຈັກພໍ **ສນ຺ຕຸຄ຺ຄີ ປຣມ໌ ຘນ໌** ຄວາມສັນໂດษເປັນຍອດຊັພຍ໌
4. ຍອດຍາຕິ ໄດ້ແກ່ຄວາມຄຸ້ນເຄີຍ **ວິສ຺ສາສາ ປຣມາ ຍາຕີ** ຄວາມຄຸ້ນເຄີຍເປັນຍາຕິຢ່າງຍອດ
5. ຍອດທຸກຂ໌ ໄດ້ແກ່ຮູປນາມ **ສງ຺ຂາຣາ ປຣມາ ທຸກ຺ຂາ** ສັງຂາຄືຮູປກັບນາມເປັນທຸກຂ໌ຢ່າງຍອດ
6. ຍອດສຸຂ ໄດ້ແກ່ພຣະນິພພານ **ນິພ຺ພານ໌ ປຣມ໌ ສຸຂ໌** ພຣະນິພພານເປັນສຸຂຢ່າງຍອດ
7. ຍອດຄົນ ໄດ້ແກ່ຄົນບໍ່ເຊື່ອຄຸຕລັນມ໌ທີ່ຕົນແທງຕລອດແລ້ວ ດ້ວຍຄຳເວົ້າຂອງຄົນອື່ນ ຄົນຜູ້ບັຣລຸນິພພານ ຄົນຕັດທີ່ຕໍ່ ຄົນຫມົດໂອກາສທີ່ຈະມາເກີດອີກ ຄົນທີ່ເຫມົດຕັຕຫາ ນີ້ແຫລະຄືຍອດຄົນສົມດັ່ງພຣະບາລີໃນພຣະໄຕຣປີຜົກຮັບຮອງໄວ້ວ່າ

**ອສ຺ສທ຺ໂລ ອກຕລ຺ ລູ ຈ ສນ຺ລິຈ຺ເຈໂທ ຈ ໂຍ ນໂຣ**

**ຫຕາວກາໂສ ວນ຺ຕາໂສ ສ ເວ ອຸຕ຺ຕມໂປຣິໂສฯ**

ແປລວ່າ ບຸຄຄົລຜູ້ບໍ່ເຊື່ອຄຸຕລັນມ໌ທີ່ຕົນແທງຕລອດແລ້ວ ດ້ວຍຖ້ອຍຄຳຂອງຄົນເຫລົ່າອື່ນ ໑ ບຸຄຄົລຜູ້ຮູ້ພຣະນິພພານອັນປັຈຈັຍອັນໃດໆ ປຸງແຕ່ງບໍ່ໄດ້ແລ້ວ ໑ ບຸຄຄົລຜູ້ຕັດທີ່ຕໍ່ຄືວັຜຜສົງສາຣໄດ້ແລ້ວ ໑ ບຸຄຄົລຜູ້ບໍ່ມີໂອກາສທີ່ຈະເມືອມາເກີດອີກ ໑ ບຸຄຄົລຜູ້ທີ່ສິ້ນຫວັງຄືຫມົດຢາກ ໄດ້ແກ່ສິ້ນຕັຕຫາ ໑ ນັ້ນແລຊື່ວ່າເປັນຍອດຄົນ ດັ່ງນີ້

## ທາງໄປນິພພານ ໄດ້ແກ່ ວິປັສສນາກັມມການ

ຄຳວ່າ "**ນິພພານ**" ແປລວ່າ **ດັບກິເລສຯ** ກິເລສທີ່ນິພພານຈະດັບນັ້ນມີຢູ່ ໑໔ ຄື ໂລກະ ໗ ໂທສະ ໔ ໂມຫະ ໔

ເຖິງນິພພານເທື່ອທີ່ ໑ ລະກິເລສໄດ້ ໕ ຄື ໂລກະ ໔ ໂມຫະ ໑

ເຖິງນິພພານເທື່ອທີ່ ໔ ທຳກິເລສທີ່ເຫລືອ ໆ ນັ້ນ ໃຫ້ເບົາບາງລົງ

ເຖິງນິພພານເທື່ອທີ່ ໓ ລະໂທສະໄດ້ ໔

ເຖິງນິພພານເທື່ອທີ່ ໔ ລະກິເລສໄດ້ອີກ ໕ ຄື ໂລກະ ໔ ກັບໂມຫະ ໑

# ວິປັສສນາກັມມການ

ວິປັສສນາກັມມການ ແປລວ່າ ກັມມການເປັນອຸບາຍທຳໃຈໃຫ້ເກີດປັຌຌາຮູ້ແຈ້ງເຫັນຈິງຕາມຄວາມເປັນຈິງ ຄືເຫັນປັຈຈຸບັນທັມມ໌ ເຫັນຮູປນາມ ເຫັນພຣະໄຕຣລັກສຌ໌ ເຫັນມັຄຄ໌ຜົລນິພພານ

ສ່ວນຄຳວ່າ "**ກັມມການ**" ນັ້ນແປລວ່າ ກາຣກະທຳທີ່ເປັນເຫຕຸໃຫ້ໄດ້ບັຣລຸຄຸຌວິເສຉ ຄື ຌານ ມັຄຄ໌ ຜົລ ນິພພານ

ຄຳວ່າ "**ກັມມການ**" ເປັນຄຳກາງໆ ຍັງບໍ່ສະເພາະເຈາະຈົງໄປວ່າເປັນສມຖະຫຣືວິປັສສນາ ຖ້າຈະໃຫ້ເປັນ **ສຖມ** ກໍເຕີມ ຄຳວ່າ ສມຖ ລົງໄປຂ້າຫນ້າສຳເຣັຈຮູປເປັນ ສມຖກັມມການ ຖ້າຈະໃຫ້ເປັນ ວິປັສສນາ ກໍໃຫ້ເຕີມຄຳວ່າ ວິປັສສນາ ລົງຂ້າງຫນ້າເປັນ ວິປັສສນາກັມມການ

ອາຣົມຌ໌ຂອງວິປັສສນາກັມມການ ໄດ້ແກ່ ຂັນຘ໌ ໕ ອາຍຕນະ ໑໔ ຘາຕຸ ໑໗ ອິນທຣີຍ໌ ໔໔ ອຣິຍສັຈ ໔ ປຝິຈຈສມຸປບາທ ໑໔ ຫຍໍ້ໃຫ້ສັ້ນ ໄດ້ແກ່ ຮູປນາມ ຄື ກາຍກັບໃຈ

ກາຣຈະເຣີຌວິປັສສນາກັມມການນັ້ນ ເຖິງຈະມີຄວາມຮູ້ທາງດ້ານປຣິຍັຕິດີຢ່າງໃດກໍຕາມບໍ່ສາມາຖຈະລົງມືປຝິບັຕິດ້ວຍຕົນເອງໃຫ້ໄດ້ຜົລດີໄດ້ ເບິ່ງພຣະຕຸຈຈະໂປກີລະ ເປັນຕົວຢ່າງກໍແລ້ວກັນ ຂນາດຮຽນຈົບພຣະໄຕຣປີຝົກກໍຕ້ອງອາສັຍສາມເຌຣນ້ອຍອາຍຸແຄ່ ໆ ຂວບເທົ່ານັ້ນເປັນພຣະອາຈາຣຍ໌ສອນໃຫ້ ທ່ານຈຶ່ງໄດ້ສຳເຣັຈເປັນພຣະອຣຫັນຕ໌ ດັ່ງນັ້ນທ່ານຜູ້ມຸ່ງປຝິບັຕິເພື່ອໃຫ້ໄດ້ຜົລອັນສູງແທ້ໆ ແລ້ວ ຕ້ອງມີຄຣູບາອາຈາຣຍ໌ຄອຍສອບອາຣົມຌ໌ ຄອຍຕໍ່ບົທຮຽນໃຫ້ຈົນກວ່າຈະໄດ້ຟັງເທສນ໌ລຳດັບຌາຌ ຮູ້ແນວທາງແລ້ວນຳໄປປຝິບັຕິດ້ວຍຕົນເອງໄດ້ໃນໂອກາສຕໍ່ໄປ ເຖິງຈະໄປຢູ່ໃນບ່ອນໃດໆ ກໍສາມາຖປຝິບັຕິໄດ້ເພາະຮູ້ວິຘີແລ້ວ ຕາມທັມມ໌ນຽມຂອງຜູ້ປຝິບັຕິ ຈຳເປັນຈະຕ້ອງຂຶ້ນກັມມການ ຫຣືຂຶ້ນຄຣູເສັຽກ່ອນ ໂບຣາຌເອີ້ນວ່າ ຄຣອບວິຊາໃຫ້

# ວິທີສມາທານພຣະກັມມຖານ

໑. ຖວາຍສັກກາຣະຕໍ່ພຣະອາຈາຣຍ໌ ຜູ້ໃຫ້ພຣະກັມມຖານແກ່ຕົນກ່ອນ

໒. ຈຸດທູປທຽນບູຊາພຣະຣັຕນຕຣັຍ

໓. ຖ້າເປັນພຣະໃຫ້ສະແດງອາບັຕິກ່ອນ ຖ້າເປັນອຸບາສົກອຸບາສິກາ ໃຫ້ສມາທານສີລ ໕ ຫຼືສີລ ໘ ກ່ອນ

໔. ມອບກາຍຖວາຍຕົວຕໍ່ພຣະຣັຕນຕຣັຍວ່າ

**ອິມາຫံ ภควา อัตตภาวํ ตุมฺหากํ ปริจฺจชามิ**

ຂ້າແຕ່ສົມເດັຈພຣະຜູ້ມີພຣະກາຄເຈົ້າ ຂ້າພເຈົ້າຂໍມອບກາຍຖວາຍຕົວຕໍ່ພຣະຣັຕນຕຣັຍ ເພື່ອຈະເຣີນກັມມຖານ

໕. ມອບກາຍຖວາຍຕົວຕໍ່ພຣະອາຈາຣຍ໌

**ອິມາຫံ ອາຈຣິຢ ອຕຸຕກາວໍ ຕຸມຸຫາກໍ ປຣິຈຸຈຊາມິ**

ຂ້າແຕ່ພຣະອາຈາຣຍ໌ຜູ້ຈະເຣີນ ຂ້າພເຈົ້າຂໍມອບກາຍຖວາຍຕົວຕໍ່ພຣະອາຈາຣຍ໌ ເພື່ອຈະເຣີນກັມມຖານ

໖. ຂໍພຣະກັມມຖານ

**ນິພຸພານສຸສ ເມ ກນຸເຕ ສຈຸຈິກຣຕາຕຸກາຍ ກມຸມຜຸຖານໍ ເທຫິ**

ຂ້າແຕ່ທ່ານຜູ້ຈະເຣີນ ຂໍທ່ານຈົ່ງ ໃຫ້ກັມມຖານແກ່ຂ້າພເຈົ້າເພື່ອບັຣລຸ ມັຄຄ໌ ຜົລ ນິພພານ

໗. ແຜ່ເມຕຕາ

**ອຫໍ ສຸຂິໂຕ ໂຫມິ ນິທຸທຸກໂຂ ໂຫມິ ອເວໂຣ ໂຫມິ ອພຸຢາປຊຸໂຊ ໂຫມິ ອນິໂຄ ໂຫມິ ສຸຂີອຕຸຕານໍ ປຣິຫຣາມິ**

ຂໍໃຫ້ຂ້າພເຈົ້າມີຄວາມສຸຂ ປຣາສຈາກຄວາມທຸກຂ໌ ບໍ່ມີກັຍບໍ່ມີເວຣ ບໍ່ມີຄວາມບຽດບຽນເຊິ່ງກັນແລະກັນ ບໍ່ມີຄວາມທຸກຂ໌ກາຍ ທຸກຂ໌ໃຈ ຂໍໃຫ້ມີຄວາມສຸຂຮັກສາຕົນຢູ່ເຖີດ

**ສພຸເພ ສຕຸຕາ ສຸຂິຕາ ໂຫນຸຕຸ ນິທຸທຸກຂາ ໂຫນຸຕຸ ອເວຣາ ໂຫນຸຕຸ ອພຸຢາປຊຸຊາ ໂຫນຸຕຸ ອນີຄາ ໂຫນຸຕຸ ສຸຂີ ອຕຸຕານໍ ປຣິຫຣນຸຕຸ**

ຂໍໃຫ້ສັຕວ໌ທັ້ງຫລາຍທຸກຕົວຕົນ ຈົ່ງມີຄວາມສຸຂ ປຣາສຈາກຄວາມທຸກຂ໌ ບໍ່ມີກັຍ ບໍ່ມີເວຣ ບໍ່ມີຄວາມບຽດບຽນເຊິ່ງກັນແລະກັນ ບໍ່ມີຄວາມທຸກຂ໌ກາຍທຸກຂ໌ໃຈ ຂໍໃຫ້ມີຄວາມສຸຂຮັກສາຕົນຢູ່ເຖີດ

ຖ. ຈະເຣີນມໍຣຕານຸສສຕິ

**ອທຸລຸວ ເມ ຊີວິຕໍ ລຸວ ມຣຕໍ ອວສຸສໍ ມຢາ ມຣິຕພຸພໍ ມຣຕປຣິໂຢສານໍ ເມ ຊີວິຕໍ ຊີວິຕ ເມວ ອນິຍຕໍ ມຣຕໍ ນິຢຕໍ**

ຊີວິຕຂອງເຮົາເປັນຂອງບໍ່ຍັ້ງຍືນ ຄວາມຕາຍເປັນຂອງຍັ້ງຢືນ ເຮົາຈະຕ້ອງຕາຍແນ່ ເພາະວ່າຊີວິຕຂອງເຮົາມີຄວາມຕາຍເປັນທີ່ສຸດ ຊີວິຕເປັນຂອງບໍ່ແນ່ນອນ ຄວາມຕາຍເປັນຂອງແນ່ນອນແທ້ ເປັນໂຊຄອັນດີທີ່ເຮົາໄດ້ມີໂອກາສມາສມາທານພຣະກັມມຖານ ໓ ບັດນີ້ ບໍ່ເສັຽທີທີ່ໄດ້ເກີດມາເປັນມນຸຫຍ໌ພົບພຣະພຸທສສາສນາ

ຌ. ຕັ້ງສັຈຈອະທິຖານ

**ເຢເນວ ຢນ຺ຕິ ນິພຸພານໍ ພຸທຸລາ ເຕສຌຈ ສາວກາ**

**ເອກາຍເນນ ມຄ຺ເຄນ ສຕິປຌຖານສຌຌິນາ ฯ**

ພຣະພຸທສເຈົ້າແລະເຫລົ່າພຣະອຣິຍສາວົກ ຍ່ອມດຳເນີນໄປສູ່ພຣະນິພພານດ້ວຍຫົນທາງສາຍນີ້ ອັນເປັນທາງສາຍເອກ ເຊິ່ງນັກປຣາຊຍ໌ຣາຊບັຕຫິຕທັ້ງຫລາຍຮູ້ທົ່ວເຖິງກັນແລ້ວວ່າ ໄດ້ແກ່ ສຕິປັຏຖານ ໔ ฯ

ຂ້າພເຈົ້າຂໍຕັ້ງສັຈຈະອະທິຖານປຏິຍາຕຕົນຕໍ່ພຣະຣັຕນຕຣັຍ ຕໍ່ຄຣູອາຈາຣຍ໌ວ່າ ຈະຕັ້ງອົກຕັ້ງໃຈປະພຶຕປຏິບັຕິແທ້ໆ ເທົ່າທີ່ຕົນສາມາຖ ເທົ່າທີ່ຕົນມີໂອກາສຈະປະພຶຕປຏິບັຕິໄດ້ ເພື່ອບູຊາພຣະຣັຕນຕຣັຍ

໑໐. ຕັ້ງຄວາມປັຕຖນາ

ອິມາຍ ຘມ຺ມານຸຘມ຺ມປຏິປຕ຺ຕິຢາ ຣຕນຕ຺ຕຍໍ ປູເຊມິ

ຂ້າພເຈົ້າຂໍບູຊາພຣະຣັຕນຕຣັຍດ້ວຍການປຏິບັຕິຘັມມ໌ສົມຄວຣແກ່ຘັມມ໌ນີ້ ດ້ວຍສັຈຈວາຈາທີ່ໄດ້ກ່າວອ້າງນີ້ ຂໍໃຫ້ຂ້າພເຈົ້າໄດ້ສຳເຣັຈຜົລສົມຄວາມປັຕຖນາໃນເວລາອັນບໍ່ຊ້າດ້ວຍເທີ້ນ

໑໑. ສູຕພຣະພຸທສຄຸຕ ພຣະຘັມມ໌ຄຸຕ ພຣະສັງຑຄຸຕ

໑໒. ຖ້າຢູ່ປ່າ ຢູ່ໃນຖ້ຳ ຢູ່ໃນກູ ໃຫ້ສູຕກຣະນີຍເມຕຕສູຕຣ໌ແລະສູຕຂັນຘປຣິຕຣ໌ນຳ

# ວິທີປະຕິບັດວິປັສສນາກັມມະຖານ...ມື້ທຳອິດ

**ມື້ທຳອິດ** ໃຫ້ກັມມະຖານໄປປະຕິບັດ ໓ ຄື

## ໑. ຍ່າງຈົງກົມ

ໃຫ້ຢືນຕົວຕົງ ເອົາມືຂວາໄຂວ້ທັບມືຊ້າຍກໍໄດ້ ວາງໄວ້ຕົງໆ ກໍໄດ້ ໄຂວ້ຫລັງກໍໄດ້ຕາມແຕ່ຖະນັດ ສ່ວນຫລາຍເອົາໄວ້ຂ້າງໜ້າ ທອດສາຍຕາໄປປະມານ ໔-໕ ສອກ ໃຫ້ມືນຕາ ຢ່າຫລັບຕາ ໃຫ້ສະຕິຈັບຢູ່ທີ່ຮ່າງກາຍ ກາວນາວ່າ ຢືນໜໍ່ ໓ ເທື່ອ ຕໍ່ນັ້ນໄປໃຫ້ສະຕິຈັບຢູ່ທີ່ສົ້ນຕີນ ຍ່າງຊ້າໆ ກາວນາຢູ່ໃນໃຈວ່າ "ຂວາ ຍ່າງ ໜໍ່" ຂະນະທີ່ໃຈຄິດວ່າ ຂວາ ຕ້ອງຍົກສົ້ນຕີນຂ້າງຂວາຂຶ້ນໃຫ້ພ້ອມກັນ ຕີນທີ່ຍົກກັບໃຈທີ່ຄິດຕ້ອງໃຫ້ຕົງກັນ ຂະນະວ່າ ຍ່າງ ຕ້ອງຍ້າຍຕີນໄປຢ່າງຊ້າໆ



ລາກສຽງຍາວໆ ແລ້ວຫຍຸດໜ້ອຍນຶ່ງຂະນະວ່າ ໜໍ່ ຕີນຕ້ອງລົງເຖິງພື້ນພ້ອມກັນ ເວລາຍົກຕີນຊ້າຍກໍເໝືອນກັນກາວນາໃນໃຈວ່າ "ຊ້າຍ ຍ່າງ ໜໍ່" ເຊັ່ນດຽວກັນ

ໃຫ້ສົ້ນຕີນ ກັບ ປາຍຕີນ ຫ່າງກັນປະມານສັກ ໑-໓ ນີ້ວ ເມື່ອຍ່າງສຸດສາດ ສຸດທົນທາງ ຫລືສຸດສະຖານທີ່ ໃຫ້ເອົາຕີນຄຽງກັນ ແລ້ວຫຍຸດຍ່າງ ກາວນາໃນໃຈວ່າ "ຢືນໜໍ່ ຢືນໜໍ່ ຢືນໜໍ່" ວ່າຊ້າໆ ປະມານສັກ ໓ ເທື່ອ ຫລື ໔-໕ ເທື່ອ ຂະນະນັ້ນໃຫ້ສະຕິຢູ່ທີ່ຮ່າງກາຍ ຢ່າໃຫ້ອອກໄປນອກຮ່າງກາຍ ແລ້ວເມືອຈະເມືອຂ້າງຂວາຫລືຂ້າງຊ້າຍກໍໄດ້ ຖ້າເມືອຂ້າງຂວາ ເວລາເມືອສົ້ນຕີນຕິດຢູ່ກັບພື້ນ ຍົກປາຍຕີນໃຫ້ພົ້ນພື້ນແລ້ວໝູນໄປຊ້າໆ ພ້ອມກັບກາວນາໃນໃຈວ່າ "ເມືອໜໍ່ ເມືອໜໍ່ ເມືອໜໍ່" ໃຫ້ໝູນໄປປະມານສັກ ໔-໕ ນີ້ວ ສ່ວນຕີນຊ້າຍໃຫ້ຍົກຂຶ້ນພົ້ນພື້ນແລ້ວໝູນຕາມໄປພ້ອມກັນກາວນາວ່າ ເມືອໜໍ່ ເມືອໜໍ່ ເມືອໜໍ່ ເຊັ່ນດຽວກັນ ໃຫ້ໝູນເມືອໄປຢ່າງນີ້ປະມານ ໓ ຫລື ໔ ຄູ່ ກໍຈະພໍດີກັບຄວາມຕ້ອງການທີ່ຈະຫຍຸດ ແລ້ວຢືນຕົງຢູ່ກັບທີ່ ກາວນາວ່າ ຢືນໜໍ່ ຢືນໜໍ່ ຢືນໜໍ່ ວ່າ ໓-໔ ເທື່ອ ແລ້ວຍ່າງຈົງກົມຕໍ່ໄປໂດຍ ກາວນາວ່າ ຂວາ ຍ່າງ ໜໍ່ ຊ້າຍ ຍ່າງ ໜໍ່

ໃຫ້ຍ່າງເມືອໄປເມືອມາຢູ່ຢ່າງນີ້ ປະມານ ໓໐ ນາທີ ຫລື ໑ ຊົ່ວໂມງ ເມື່ອຍ່າງພໍສົມຄວນແກ່ເວລາແລ້ວ ກໍໃຫ້ນັ່ງຕິດຕໍ່ກັນໄປເລີຍ ຈຶ່ງຈະບໍ່ຂາດຣະຍະ ສະຕິ ສະມາທິ ປັນຍາ ຈຶ່ງຈະແກ່ກລ້າດີ

## ໒. ນັ່ງ

ໃຫ້ຕຽມຈັດອາສນະສຳຣັບນັ່ງໄວ້ກ່ອນຍ່າງຈົງກົມ ເວລານັ່ງໃຫ້ຄ່ອຍໆ ຫຍໍ່ລົງ ເມື່ອຍ່າງຄົບກຳໜົດແລ້ວໃຫ້ ນັ່ງລົງພ້ອມກັບກາວນາວ່າ "ນັ່ງໜໍ່ ນັ່ງໜໍ່ ນັ່ງໜໍ່" ໃຫ້ກາວນາຢ່າງນີ້ເລື່ອງໄປຈົນກວ່າຈະນັ່ງແລ້ວຮຽບຮ້ອຍ

ວິທີນັ່ງ ໃຫ້ນັ່ງຂັດສະມາທິ ຄື ຕີນຂາຂວາທັບຂາຊ້າຍ ເອົາມືຂວາທັບມືຊ້າຍ ຕັ້ງກາຍໃຫ້ຕົງດຳຣົງສະຕິໃຫ້ໝັ້ນ ຖ້າຈຳເປັນຈະນັ່ງຕັ່ງ ຫລືນັ່ງພັບພຽບກໍໄດ້

ນັ່ງຮຽບຮ້ອຍແລ້ວໃຫ້ຫລັບຕາ ເອົາສະຕິມາຈັບຢູ່ທີ່ທ້ອງເຫນືອສະບືປະມານ ໔ ນີ້ວ ເວລາຫາຍໃຈເຂົ້າທ້ອງພອງ ໃຫ້ກາວນາຕາມອາການພອງວ່າ "ພອງນໍ" ໃຈທີ່ຄຶດກັບທ້ອງທີ່ພ້ອງຕ້ອງໃຫ້ທັນກັນ ໃຫ້ຕົງກັນພໍດີ ຢ່າໃຫ້ກ່ອນຫຣືຫລັງກັນ ຈຶ່ງຈະໄດ້ປັຈຈຸບັນດີ ເວລາຫາຍໃຈອອກທ້ອງຍຸບ ໃຫ້ກາວນາວ່າ "ຍຸບນໍ" ໃຈທີ່ຄຶດກັບທ້ອງທີ່ຍຸບຕ້ອງໃຫ້ທັນກັນຢ່າໃຫ້ກ່ອນ ຫຣືຫລັງກັນ

ຂໍ້ສຳຄັນ ໃຫ້ຈິຕຈັບຢູ່ທີ່ອາການພອງ ອາການແວບຂອງທ້ອງເທົ່ານັ້ນ ຢ່າໄປເບິ່ງລົມທີ່ດັງແລະຢ່າເບັ່ງທ້ອງ ໃຫ້ນັ່ງກາວນາຢ່າງນີ້ຕລອດໄປ ຢ່າງຕ່ຳປະມານ ໓໐-໔໐ ນາທີ ຢ່າງສູງປະມານ ໑ ຊົ່ວໂມງ ຫຣືເກີນກວ່ານັ້ນກໍຍິ່ງດີ

## ໓. ເວທນາ

ເວທນາ ຄື ຄວາມສະບາຍ ຄວາມບໍ່ສະບາຍ ຫຣືເສີຍໆ ໃນຂຕະທີ່ນັ່ງຢູ່ນັ້ນ ຖ້າເວທນາຢ່າງໃດຢ່າງນຶ່ງເກີດຂຶ້ນ ເຊັ່ນ ເຈັບ ປວດ ເມື່ອຍ ຄັນ ເປັນຕົ້ນ ໃຫ້ປ່ອຍ ພອງ ຍຸບ ແລ້ວເອົາສະຕິໄປກຳຫນົດທີ່ເຈັບ ປວດ ເມື່ອຍ ຄັນ ເປັນຕົ້ນນັ້ນ ພ້ອມກັບກາວນາວ່າ ເຈັບນໍໆ ຫຣື ປວດນໍໆ ຫຣື ເມື່ອຍນໍໆ ຫຣື ຄັນນໍໆ ຕາມອາການຂອງເວທນານັ້ນໆ ສຸດແທ້ແຕ່ເວທນາຢ່າງໃດຈະເກີດຂຶ້ນ ເມື່ອເວທນາຫາຍແລ້ວ ໃຫ້ເອົາສະຕິເມືອໄປກຳຫນົດທີ່ທ້ອງ ກາວນາວ່າ ພອງນໍ ຍຸບນໍ ຕໍ່ໄປອີກຈົນກວ່າຈະຄົບກຳຫນົດເວລາທີ່ຕົນກຳຫນົດໄວ້ ຫຣືທີ່ຕົນໄດ້ກະໄວ້

## ໔. ຈິຕ

ໃນເວລາທີ່ນັ່ງກຳຫນົດຢູ່ນັ້ນ ຖ້າຈິຕຄຶດເຖິງບ້ານ ຄຶດເຖິງຊັພຍ໌ສົມບັຕິ ຫຣືຄຶດເຖິງກິຈການງານຕ່າງໆ ໃຫ້ເອົາສະຕິກຳຫນົດທີ່ຫົວໃຈ ພ້ອມກັບກາວນາວ່າ ຄຶດນໍ ຄຶດນໍ ຈົນກວ່າຈະຫຍຸດຄຶດ ເມື່ອຫຍຸດຄຶດແລ້ວ ໃຫ້ເມືອໄປກຳຫນົດພອງນໍ ຍຸບນໍ ຕໍ່ໄປອີກ ແມ້ດີໃຈ ເສັຽໃຈ ໂກຣ ເປັນຕົ້ນ ກໍໃຫ້ໃຊ້ສະຕິກຳຫນົດທີ່ຫົວໃຈ ໂດຍທຳນອງດຽວກັນຢ່າງນີ້ ຄືຖ້າດີໃຈ ໃຫ້ກຳຫນົດວ່າ ດີໃຈນໍ ດີໃຈນໍ ຖ້າເສັຽໃຈ ໃຫ້ກຳຫນົດວ່າ ເສັຽໃຈນໍ ເສັຽໃຈນໍ ຖ້າໂກຣ ໃຫ້ກຳຫນົດວ່າ ໂກຣນໍ ໂກຣນໍ ຈົນກວ່າຄວາມໂກຣນັ້ນຈະຫາຍໄປ ເມື່ອຄວາມໂກຣຫາຍໄປແລ້ວໃຫ້ເມືອໄປ ກຳຫນົດ ພອງນໍ ຍຸບນໍ ຕໍ່ໄປອີກ ຈົນກວ່າຈະຫມົດເວລາ

## ໕. ສຽງ

ໃນຂຕະທີ່ນັ່ງກຳຫນົດຢູ່ນັ້ນ ຖ້າມີສຽງດັ່ງຫນວກຫູ ໃຫ້ໃຊ້ສະຕິກຳຫນົດທີ່ຫູ ກາວນາວ່າ ໄດ້ຍິນນໍ ໄດ້ຍິນນໍ ຈົນກວ່າຈະຫາຍຫນວກຫູ ເມື່ອຫາຍຫນວກຫູແລ້ວ ໃຫ້ເມືອໄປກຳຫນົດ ພອງນໍ ຍຸບນໍ ຕໍ່ໄປ

## ໖. ນອນ

ເວລານອນ ໃຫ້ຄ່ອຍໆ ເອນຕົວລົງ ພ້ອມກັບກາວນາວ່າ ນອນນໍ ນອນນໍ ຈົນກວ່າຈະນອນຮຽບຮ້ອຍ ຂຕະທີ່ກາວນານັ້ນ ໃຫ້ສະຕິຈັບຢູ່ທີ່ອາການທີ່ເຄື່ອນໄຫວຂອງຮ່າງກາຍ ເມື່ອນອນຮຽບຮ້ອຍແລ້ວໃຫ້ເອົາສະຕິມາໄວ້ທີ່ທ້ອງ

ພ້ອມກັບກາວນາວ່າ ພອງນໍ ຍຸບນໍ ຕໍ່ໄປ ຈົນກວ່າຈະຫລັບ ໃຫ້ຄອຍສັງເກດໃຫ້ດີວ່າ ຈະຫລັບໄປຕອນ ພອງ ຫຣື ຫລັບໄປຕອນ ຍຸບ

ວັນທຳອິດ ໃຫ້ບົທຮຽນໄປປຜິບັຕິພຽງຫຍໍ້ໆ ເທົ່ານີ້ກ່ອນ ວັນຕໍ່ໄປ ໃຫ້ນັກປຜິບັຕິນັ້ນໄປສົ່ງອາຣົມຕ໌ ຄື ໃຫ້ໄປສອບກັມມຖານກັບພຣະອາຈາຣຍ໌ຜູ້ໃຫ້ກັມມຖານນັ້ນ

# ວິທີປຜິບັຕິວິປັສສນາກັມມຖານ...ວັນສອງ

## ວັນທີ່ສອງ

ເມື່ອພຣະອາຈາຣຍ໌ສອບກັມມຖານແລ້ວ ໃຫ້ເພີ່ມບົທຮຽນ ໑ ບົທ ຄື ກຳຫນົດຕົ້ນໃຈ ຫມາຍຄວາມວ່າ ເມື່ອພຣະອາຈາຣຍ໌ໄດ້ສອບອາຣົມຕ໌ໂດຍລະອຽດ ນັບແຕ່ກາຍ່າງ ກາຣນັ່ງ ເວທນາ ຈິຕ ແລະກາຣນອນ ແລ້ວຖາມສກາວະຕໍ່ໄປ ເຊັ່ນ ຖາມວ່າພອງກັບຍຸບອັນໃດສັ້ນ ອັນໃດຍາວ ອັນໃດປາກົຜຊັດ ອັນໃດບໍ່ປາກົຜຊັດ ເປັນອັນດຽວກັນຫຣືເປັນຄົນລະອັນ ພອງນໍເທື່ອນຶ່ງມີຈັກຣະຍະ ເປັນຕົ້ນ ເມື່ອສອບແລ້ວແລ້ວຈຶ່ງເພີ່ມບົທຮຽນໄດ້

ກາຣເພີ່ມບົທຮຽນວັນນີ້ ໄດ້ແກ່ ໃຫ້ກຳຫນົດຕົ້ນໃຈ ຕົ້ນໃຈໄດ້ແກ່ ຄວາມຢາກນັ້ນເອງ ເຊັ່ນ ຢາກລຸກ ຢາກຢືນ ຢາກຍ່າງ ຢາກນັ່ງ ຢາກນອນ ຢາກຖ່າຍອຸຈຈາຣະ ຢາກຖ່າຍປັສສາວະ ເປັນຕົ້ນ ຈະຍົກມາພໍເປັນຕົວຢ່າງ ເຊັ່ນ ເວລາຈະລຸກ ໃຫ້ເອົາສຕິກຳຫນົດທີ່ຫົວໃຈ ກາວນາວ່າ ຢາກລຸກນໍ ຢາກລຸກນໍ ເວລາລຸກຂຶ້ນໃຫ້ກາວນາວ່າ ລຸກນໍ ລຸກນໍ ໆ ເວລາຈະຍ່າງ ໃຫ້ກາວນາວ່າ ຢາກຍ່າງນໍໆ ແລ້ວຈຶ່ງຍ່າງ ເວລາຍ່າງກໍໃຫ້ກາວນາວ່າ ຂວາ ຍ່າງ ນໍ ຊ້າຍ ຍ່າງ ນໍ ດັ່ງທີ່ເຄີຍ ປຜິບັຕິມາແລ້ວນັ້ນ

ຂໍ້ສຳຄັນ ເຮົາຈະເຮັດຫຍັງທຸກໆ ຢ່າງ ໃຫ້ກຳຫນົດຕົ້ນໃຈທຸກໆ ເທື່ອ ເວລາຈະຮັບປຣະທານອາຫາຣກໍໃຫ້ກາວນາວ່າ ຢາກນໍໆ ເວລາຮັບປຣະທານໃຫ້ກາວນາວ່າ ຮັບປຣະທານນໍໆ ຫຣືຈະຫຍໍ້ວ່າ ທານນໍໆ ດັ່ງນີ້ກໍໄດ້ ໃຫ້ເອົາສຕິໄວ້ທີ່ຄາງກະໄຕ ຂ້າງລຸ່ມ

## ວັນທີ່ສາມ ຫຣື ວັນທີ່ ໔-໕

ໃຫ້ເພີ່ມບົທຮຽນໄດ້ອີກ ໑ ບົທ ຄື ເພີ່ມກາຣກຳຫນົດທວາຣທັງ ໕ ໄດ້ແກ່ ກຳຫນົດທາງ ຕາ ຫູ ດັງ ລີ້ນ ກາຍ ມີວິທີປຜິບັຕິດັ່ງນີ້

໑. ເວລາຕາເຫັນຮູປ ໃຫ້ຕັ້ງສຕິໄວ້ທີ່ຕາ ກາວນາວ່າ ເຫັນນໍ ເຫັນນໍ
໒. ເວລາຫູໄດ້ຍິນສຽງ ໃຫ້ຕັ້ງສຕິໄວ້ທີ່ຫູ ກາວນາວ່າ ໄດ້ຍິນນໍ ໄດ້ຍິນນໍ
໓. ເວລາດັງໄດ້ກລິ່ນ ໃຫ້ຕັ້ງສຕິໄວ້ທີ່ດັງ ກາວນາວ່າ ກລິ່ນນໍ ກລິ່ນນໍ

໔. ເວລາລີ້ນໄດ້ຣົສ ໃຫ້ຕັ້ງສຕິໄວ້ທີ່ລີ້ນ ກາວນາວ່າ ຣົສນໍ ຣົສນໍ

໕. ເວລາກາຍຖືກຕ້ອງ ເຢັນ ຮ້ອນ ອ່ອນ ແຂັງ ໃຫ້ຕັ້ງສຕິໄວ້ທີ່ຕິງທີ່ຖືກ ກາວນາວ່າ ຖືກນໍ ໆ

## ວັນຕໍ່ໄປ

ເມື່ອຌາຕທີ່ ໑-໔ ເກີດຂຶ້ນແລ້ວ ໃຫ້ເພີ່ມບົທຮຽນອີກ ໑ ບົທ ຄື ເພີ່ມຍ່າງຈົງກຣົມຣະຍະທີ່ ໔ ວ່າ "ຍົກນໍ ຍົກນໍ"

ທຸກເທື່ອທີ່ປຜິບັຕິ ຕ້ອງໃຫ້ຍ່າງຈົງກຣົມຣະຍະທີ່ ໑ ກ່ອນ ຍ່າງປຣະມາຓ ໕໐ ນາທີ ແລ້ວຈຶ່ງຍ່າງຣະຍະທີ່ ໔ ປຣະມາຓ ໕໐ ນາທີ ຣວມເປັນ ໑ ຊົ່ວໂມງ ຈຶ່ງນັ່ງກາວນາວ່າ "ພອງນໍ ຍຸບນໍ" ຕໍ່ໄປ

## ວັນຕໍ່ໄປ

ເວລາກຳຫນົດຍຸບນໍນັ້ນ ຖ້າຮູ້ສຶກວ່າຖີ້ມຈັງຫວະໄວ້ນານທ້ອງຈຶ່ງຈະພອງຂຶ້ນມາ ໃຫ້ເພີ່ມຄຳວ່າ ນັ່ງນໍ ຕໍ່ໄດ້ ຕອນທີ່ວ່າ ນັ່ງນໍນັ້ນ ຮູບນັ່ງປາກົຜໃນໃຈຄືສ່ອງກະຈົກເບິ່ງຕົວເອງ ເຫັນຊົ່ວແປບດຽວເທົ່ານັ້ນ

ເມື່ອຕໍ່ເຂົ້າກັບບົທຮຽນເດີມກໍຈະໄດ້ວິລີປຜິບັຕິດັ່ງນີ້ ຄື

ກ. ເວລາຍ່າງຈົງກຣົມ ໄດ້ ໔ ຣະຍະ ຄື ຣະຍະທີ່ ໑ "ຂວາ ຍ່າງ ນໍ" "ຊ້າຍ ຍ່າງ ນໍ" ຣະຍະທີ່ ໔ "ຍົກ ນໍ ຫຢຽບ ນໍ" "ຍົກ ນໍ ຫຢຽບ ນໍ"

ຂ. ເວລານັ່ງປຜິບັຕິ ຈະໄດ້ ໔ ຣະຍະ ຄື ຣະຍະທີ່ ໑ "ພອງ ນໍ ຍຸບ ນໍ" ຣະຍະທີ່ ໔ "ພອງນໍ ຍຸບນໍ ນັ່ງນໍ" (ຕອນຍຸບໄດ້ ໔ ຣະຍະ ເພາະ ເພີ່ມນັ່ງເຂົ້າໄປຕໍ່ຍຸບອີກ ໑ ບົທ)

## ວັນຕໍ່ໄປ

ເມື່ອຌາຕທີ່ ໕-໔ ເກີດຂຶ້ນແລ້ວ ໃຫ້ເພີ່ມບົທຮຽນໄດ້ອີກ ໑ ບົທ ຄື ຍ່າງຈົງກຣົມຣະຍະທີ່ ໕ ວ່າ "ຍົກນໍ ຍ່າງນໍ ຫຢຽບນໍ"

ເມື່ອຕໍ່ເຂົ້າກັບບົທຮຽນເດີມ ກໍຈະໄດ້ວິລີປຜິບັຕິດັ່ງນີ້ ຄື

ຣະຍະທີ່ ໑ ຂວາຍ່າງນໍ ຊ້າຍຍ່າງນໍ ໃຫ້ຍ່າງປຣະມາຓ ໑໐-໒໐ ນາທີ

ຣະຍະທີ່ ໔ ຍົກນໍ ຫຢຽບນໍ ໃຫ້ຍ່າງປຣະມາຓ ໑໐-໒໐ ນາທີ

ຣະຍະທີ່ ໕ ຍົກນໍ ຍ່າງນໍ ຫຢຽບນໍ ໃຫ້ຍ່າງປຣະມາຓ ໑໐-໒໐ ນາທີ

## ວັນຕໍ່ໄປ

ເວລາກຳຫນົດ ພອງນໍ ຍຸບນໍ ນັ່ງນໍ ເມື່ອເຖິງຕອນທີ່ວ່າ ນັ່ງນໍ ນັ້ນ ຖ້າຍັງຖີ້ມຣະຍະຫ່າງຢູ່ ຄື ທ້ອງຍັງບໍ່ພອງຂຶ້ນມາງ່າຍ ໃຫ້ເພີ່ມ ຖືກນໍ ໄດ້ອີກ ຖ້າຜູ້ໃດກຳຫນົດພຽງ ພອງນໍ ຍຸບນໍ ກໍໄດ້ສມາລິດີຢູ່ແລ້ວ ບໍ່ຈຳເປັນຈະຕ້ອງເພີ່ມ ນັ່ງນໍ ຖືກນໍ

ລົງໄປອີກ ຫຼືຄືນເຖົ້າ ຄືນແກ່ ຫຼືເດັກນ້ອຍ ກໍບໍ່ຄວນເພີ່ມ ແມ້ເວລາຍ່າງຈົງກົມ ຈະໃຊ້ພຽງ ຣະຍະທີ່ ໑ ວ່າ ຂວາຍ່າງນໍ ຊ້າຍຍ່າງນໍ ກໍໄດ້ ເວລານັ່ງຈະໃຊ້ພຽງ ພອງນໍ ຍຸບນໍ ກໍໄດ້ ເພາະຖ້າເພີ່ມບົທຮຽນຫລາຍກວ່ານັ້ນ ອາຈຈະເຮັດໃຫ້ຟັ່ນເຟືອນ ແລະຈະບໍ່ໄດ້ຜົລດີ

ເມື່ອເພີ່ມ ຖືກນໍ ເຂົ້າໄປອີກ ຈະໄດ້ວິລິປຜົບັຕິເຕັມທີ່ ດັ່ງນີ້ ຄື ພອງນໍ ຍຸບນໍ ນັ່ງນໍ ຖືກນໍ

ຄໍາວ່າ "ຖືກນໍ" ໃນທີ່ນີ້ ຫມາຍເອົາ ຖືກທີ່ກົ້ນກົບ ຖືກກັບພື້ນແລ້ວ ເອົາສຕິກໍາຫນົດລົງໄປຕົງທີ່ຖືກນັ້ນ ຍຸບ ນັ່ງ ຖືກ ທັ້ງ ໓ ຄໍານີ້ຕ້ອງໃຫ້ຢູ່ໃນຣະຍະດຽວກັນ ເມື່ອກາວນາວ່າ ຖືກນໍ ແລ້ວທ້ອງຈຶ່ງຈະພອງຂຶ້ນມາ

ເມື່ອຍາຕທີ່ ໕-6 ເກີດຂຶ້ນແລ້ວ ໃຫ້ເພີ່ມບົທຮຽນໄດ້ອີກ ໑ ບົທ ຄື ເພີ່ມຍ່າງຣະຍະທີ່ ໔ ດັ່ງນີ້ ຍົກສົ້ນນໍ ຍົກນໍ ຍ່າງນໍ ຫຢຽບນໍ

**ເມື່ອຕໍ່ກັນເຂົ້າກັບບົທຮຽນເດີມ ກໍຈະໄດ້ວິລິປຜົບັຕິດັ່ງນີ້ ຄື**

ຣະຍະທີ່ ໑ ຂວາຍ່າງນໍ ຊ້າຍຍ່າງນໍ ໃຫ້ຍ່າງປຣະມາຕ ໑໐-໑໕ ນາທີ

ຣະຍະທີ່ ໔ ຍົກນໍ ຫຢຽບນໍ ໃຫ້ຍ່າງປຣະມາຕ ໑໐-໑໕ ນາທີ

ຣະຍະທີ່ ໓ ຍົກນໍ ຍ່າງນໍ ຫຢຽບນໍ ໃຫ້ຍ່າງປຣະມາຕ ໑໐-໑໕ ນາທີ

ຣະຍະທີ່ ໔ ຍົກສົ້ນນໍ ຍົກນໍ ຍ່າງນໍ ຫຢຽບນໍ ໃຫ້ຍ່າງປຣະມາຕ ໑໐-໑໕ ນາທີ

ເມື່ອຍາຕທີ່ ໗ ຨ ໑໐ ເກີດຂຶ້ນແລ້ວ ໃຫ້ເພີ່ມບົທຮຽນໄດ້ອີກ ໑ ບົທ ຄື ເພີ່ມຍ່າງຈົງກົມຣະຍະທີ່ ໕ ດັ່ງນີ້ ຍົກສົ້ນນໍ ຍົກນໍ ຍ່າງນໍ ລົງນໍ ຖືກນໍ

**ເມື່ອຕໍ່ກັນເຂົ້າກັບບົທຮຽນເດີມ ກໍຈະໄດ້ວິລິປຜົບັຕິດັ່ງນີ້ ຄື**

ຣະຍະທີ່ ໑ ຂວາຍ່າງນໍ ຊ້າຍຍ່າງນໍ ໃຫ້ຍ່າງປຣະມາຕ ໑໐ ນາທີ

ຣະຍະທີ່ ໔ ຍົກນໍ ຫຢຽບນໍ ໃຫ້ຍ່າງປຣະມາຕ ໑໐ ນາທີ

ຣະຍະທີ່ ໓ ຍົກນໍ ຍ່າງນໍ ຫຢຽບນໍ ໃຫ້ຍ່າງປຣະມາຕ ໑໐ ນາທີ

ຣະຍະທີ່ ໔ ຍົກສົ້ນນໍ ຍົກນໍ ຍ່າງນໍ ຫຢຽບນໍ ໃຫ້ຍ່າງປຣະມາຕ ໑໐ ນາທີ

ຣະຍະທີ່ ໕ ຍົກສົ້ນນໍ ຍົກນໍ ຍ່າງນໍ ລົງນໍ ຖືກນໍ ໃຫ້ຍ່າງປຣະມາຕ ໒໐ ນາທີ

ເມື່ອຍາຕທີ່ ໑໑ ເກີດຂຶ້ນແລ້ວ ໃຫ້ເພີ່ມບົທຮຽນໄດ້ອີກ ໑ ບົທ ຄື ເພີ່ມຍ່າງຈົງກົມຣະຍະທີ່ ໖ ດັ່ງນີ້ ຍົກສົ້ນນໍ ຍົກນໍ ຍ່າງນໍ ລົງນໍ ຖືກນໍ ກົດນໍ ປຣະມາຕ ໑໐ ນາທີ

**ເມື່ອຕໍ່ກັນເຂົ້າກັບບົທຮຽນເດີມ ກໍຈະໄດ້ວິລິປຜົບັຕິດັ່ງນີ້ ຄື**

ຣະຍະທີ່ ໑ ຂວາຍ່າງນໍ ຊ້າຍຍ່າງນໍ ໃຫ້ຍ່າງປຣະມາຕ ໑໐ ນາທີ

ຣະຍະທີ່ ໑ ຍົກນໍ ຫຍຽບນໍ ໃຫ້ຢ່າງປຣະມາຓ ໑໐ ນາທີ

ຣະຍະທີ່ ໓ ຍົກນໍ ຍ່າງນໍ ຫຍຽບນໍ ໃຫ້ຢ່າງປຣະມາຓ ໑໐ ນາທີ

ຣະຍະທີ່ ໔ ຍົກສົ້ນນໍ ຍົກນໍ ຍ່າງນໍ ຫຍຽບນໍ ໃຫ້ຢ່າງປຣະມາຓ ໑໐ ນາທີ

ຣະຍະທີ່ ໕ ຍົກສົ້ນນໍ ຍົກນໍ ຍ່າງນໍ ລົງນໍ ຖືກນໍ ໃຫ້ຢ່າງປຣະມາຓ ໑໐ ນາທີ

ຣະຍະທີ່ ໖ ຍົກສົ້ນນໍ ຍົກນໍ ຍ່າງນໍ ລົງນໍ ຖືກນໍ ກົດນໍ ໃຫ້ຢ່າງປຣະມາຓ ໑໐ ນາທີ

ຖ້າມີເວລາຫລາຍ ໃຫ້ຢ່າງຣະຍະລະ ໑໐ ນາທີ ຣວມເປັນ ໑ ຊົ່ວໂມງ ແລ້ວຈຶ່ງນັ່ງສມາธิ ຖ້າມີເວລານ້ອຍກໍໃຫ້ນັກປຝິບັຕິລົດລົງໄດ້ເອງ ຄື ຈະຢ່າງຣະຍະລະ ໕ ນາທີກໍໄດ້ ນ້ອຍກວ່ານັ້ນຫລາຍກວ່ານັ້ນກໍໄດ້ ມີຫລັກສຳຄັນຢູ່ວ່າ ຖ້າຢ່າງຫລາຍສມາธิດີ ຖ້າຢ່າງນ້ອຍສມາธิອ່ອນແລະໄດ້ຜົລຊ້າ

ສ່ວນການນັ່ງນັ້ນ ເພື່ອເປັນການຝຶກ ສຕິ ສມາธิ ປັญญา ໃຫ້ແກ່ກລ້າ ໃຫ້ເຂັ້ມແຂງ ໃຫ້ເພີ່ມຖືກໄດ້ອີກເຖິງ ໖ ແຫ່ງ ຄື

໑. ພອງນໍ ຍຸບນໍ ນັ່ງນໍ ຖືກນໍ (ຖືກກົ້ນກົບຂ້າງຂວາ)

໒. ພອງນໍ ຍຸບນໍ ນັ່ງນໍ ຖືກນໍ (ຖືກກົ້ນກົບຂ້າງຊ້າຍ)

໓. ພອງນໍ ຍຸບນໍ ນັ່ງນໍ ຖືກນໍ (ຖືກເຂົ່າຂ້າງຂວາ)

໔. ພອງນໍ ຍຸບນໍ ນັ່ງນໍ ຖືກນໍ (ຖືກເຂົ່າຂ້າງຊ້າຍ)

໕. ພອງນໍ ຍຸບນໍ ນັ່ງນໍ ຖືກນໍ (ຖືກຕາຕຸ່ມຂ້າງຂວາ)

໖. ພອງນໍ ຍຸບນໍ ນັ່ງນໍ ຖືກນໍ (ຖືກຕາຕຸ່ມຂ້າງຊ້າຍ)

ເປັນອັນໄດ້ຄວາມວ່າ ບົທຮຽນນີ້ຄົບບໍຣິບູຣณ์ແລ້ວ ญาณທີ່ ໑໑ ຄື ສັງຂາຣຸເປກຂາญาณ ກໍຈະແກ່ກລ້າຂຶ້ນມາພໍສົມຄວຣ ເມື່ອญาณນີ້ຄົບອົງຄ໌ ໖ ປຣະການແລ້ວ ພຣະອາຈາຣຍ໌ຕ້ອງເຕືອນຜູ້ປຝິບັຕິມິໃຫ້ປຣະມາທ ໃຫ້ຕັ້ງໃຈປຝິບັຕິຢ່າງເຄັ່ງຄັດຣະມັດຣະວັງໃຫ້ຫລາຍທີ່ສຸດເທົ່າທີ່ຈະຫລາຍໄດ້ ເພາະຈວນຈະໄດ້ຜົລດີເຕັມທີ່ແລ້ວ ຢ່ານອນໃຈຢ່າເຫີມໃຈ ຢ່າຄິດວ່າຍັງໄກລຢູ່ອັນທີ່ແທ້ໃກລ້ຈະໄດ້ຜົລດີຢູ່ແລ້ວ

ຖ້າຜູ້ໃດບໍ່ປຣະມາທ ຜູ້ນັ້ນຈະໄດ້ຜົລດີໂດຍບໍ່ນານເລີຍ ປຣະມາຓ ໑-໓ ວັນເທົ່ານັ້ນກໍຈະເຫັນຜົລ ແຕ່ຖ້າຜູ້ໃດປຣະມາທຂາດການປຝິບັຕິຕິດຕໍ່ກັນ ຜູ້ນັ້ນຈະໄດ້ຜົລຊ້າອາຈຈະເລີຍໄປ ໕ ວັນ ໑໐ ວັນ ຫຣື ໑໕ ວັນກໍໄດ້ ອາຈຈະບໍ່ໄດ້ຜົລເຕັມທີ່ກໍເປັນໄດ້ ຖ້າຫາກວ່າຜູ້ນັ້ນຕົກຢູ່ໃນຄວາມປຣະມາທ ດັ່ງນັ້ນ ຣະຍະເຂົ້າດ້າຍເຂົ້າເຂັມນີ້ ຈຶ່ງຄວຣຈະຣະມັດຣະວັງໃຫ້ຫລາຍທີ່ສຸດເທົ່າທີ່ຈະຣະວັງໄດ້ ແມ້ຊີວິຕກໍຍອມສລະໄດ້

# ວິຘີປຏິບັຕິວິປັສສນາກັມມຐານ...ຊ່ວງສຸດທ້າຍ

## ອຘິຩຐານ

ເມື່ອຜູ້ປຏິບັຕິມີສຠາວະອັດດີແລ້ວ ພຣະອາຈາຣຍ໌ຜູ້ສອນຄວຣໃຫ້ອຘິຩຐານດັ່ງນີ້ ຄື

## ວັນທຳອິດ

ໃຫ້ຍ່າງຈົງກຣົມຣະຍະທີ່ ໑-໖ ແລ້ວນັ່ງລົງຂັດສມາຘິ (ນັ່ງລົງຂັດຕະມາດ) ອຘິຩຐານວ່າ "ຘັມມ໌ວິເສຩທີ່ເກີດຂຶ້ນແລ້ວ ຂໍຢ່າໃຫ້ເກີດອີກ ຘັມມ໌ວິເສຩເບື້ອງສູງທີ່ຍັງບໍ່ເກີດ ຂໍຈົ່ງໃຫ້ເກີດຂຶ້ນພາຍໃນ ໒໔ ຊົ່ວໂມງນີ້" ແລ້ວໃຫ້ກຳຫນົດ ພອງນໍ ຍຸບນໍ ຕໍ່ໄປ ຖ້ານັ່ງກຳຫນົດເຫນື່ອຍແລ້ວ ໃຫ້ລຸກຂຶ້ນຍ່າງຈົງກຣົມອີກ ນັ່ງອີກ ໃຫ້ປຏິບັຕິຕິດຕໍ່ກັນ ສລັບກັນຢູ່ຢ່າງນີ້ ຈົນກວ່າຈະເຖິງເວລານອນ ວັນນີ້ ຖືວ່າເປັນວັນສຳຄັນຫລາຍໃນຊີວິຕເຮົາ ດັ່ງນັ້ນ ຖ້າບໍ່ງ່ວງຢ່ານອນງ່າຍ ເມື່ອນອນຕື່ນຂຶ້ນກໍໃຫ້ປຏິບັຕິຕໍ່ໄປອີກຈົນກວ່າຈະຄົບ ໒໔ ຊົ່ວໂມງ ຈຶ່ງຈະຕໍ່ບົດຮຽນທີ່ ໒ ໄດ້

## ວັນທີ່ ໒

ໃຫ້ຍ່າງຈົງກຣົມຣະຍະທີ່ ໑-໖ ແລ້ວນັ່ງ ອຘິຩຐານວ່າ "ພາຍໃນ ໒໔ ຊົ່ວໂມງນີ້ ຂໍໃຫ້ຄວາມເກີດດັບເກີດຂຶ້ນໃຫ້ຫລາຍ" ກຳຫນົດ ພອງນໍ ຍຸບນໍ ຕໍ່ໄປ ຈົນກວ່າຈະຄົບ ໒໔ ຊົ່ວໂມງ ຈຶ່ງຈະຕໍ່ບົດຮຽນໃຫມ່ໄດ້

## ວັນທີ່ ໓

ໃຫ້ຍ່າງຈົງກຣົມຣະຍະທີ່ ໑-໖ ແລ້ວນັ່ງ ອຘິຩຐານວ່າ "ພາຍໃນຊົ່ວໂມງນີ້ ຂໍໃຫ້ຄວາມເກີດດັບເກີດຂຶ້ນໃຫ້ຫລາຍ" ກຳຫນົດ ພອງນໍ ຍຸບນໍ ຕໍ່ໄປ ບົດນີ້ໃຫ້ອຘິຩຐານທຸກຊົ່ວໂມງທີ່ນັ່ງ

## ວັນທີ່ ໔

ໃຫ້ຍ່າງຈົງກຣົມຣະຍະທີ່ ໑-໖ ແລ້ວນັ່ງ ອຘິຩຐານວ່າ "ພາຍໃນ ໓໐ ນາທີນີ້ ຂໍໃຫ້ຄວາມເກີດດັບເກີດຂຶ້ນໃຫ້ຫລາຍ" ກຳນໍ ພອງນໍ ຍຸບນໍ ຕໍ່ໄປ ບົດນີ້ໃຫ້ອຘິຩຐານທຸກ ໓໐ ນາທີທີ່ນັ່ງ

## ວັນທີ່ ໕

ໃຫ້ຍ່າງຈົງກຣົມຣະຍະທີ່ ໑-໖ ແລ້ວນັ່ງ ອຘິຩຐານວ່າ

ພາຍໃນ ໑໕ ນາທີນີ້ ຂໍໃຫ້ຄວາມເກີດດັບເກີດຂຶ້ນໃຫ້ຫລາຍ ນັ່ງກຳຫນົດໄປຈົນຄົບ ໑໕ ນາທີ

ພາຍໃນ ໑໐ ນາທີນີ້ ຂໍໃຫ້ຄວາມເກີດດັບເກີດຂຶ້ນໃຫ້ຫລາຍ ນັ່ງກຳຫນົດໄປຈົນຄົບ ໑໐ ນາທີ

ພາຍໃນ ໕ ນາທີນີ້ ຂໍໃຫ້ຄວາມເກີດດັບເກີດຂຶ້ນໃຫ້ຫລາຍ ນັ່ງກຳຫນົດໄປຈົນຄົບ ໕ ນາທີ

## ວັນທີ່ ໖

ໃຫ້ຢ່າງຈິງກຣິນຣະຍະທີ່ ໑-໖ ແລ້ວນັ່ງ ອລິษฐານວ່າ "ກາຍໃນຊົ່ວໂມງນີ້ ຂໍໃຫ້ຈິຕສງົບງຽບໄປໄດ້ນານປຣະມາຕ ໕ ນາທີ" ແລ້ວກຳຫນົດ ພອງນໍ ຍຸບນໍ ຕໍ່ໄປ ບົທນີ້ຕ້ອງຢ່າງນານ ນັ່ງນານ ຈຶງຈະໄດ້ຜົລດີ ເພາະຕ້ອງການສມາລິໃຫ້ເປັນພິເສษກວ່າສັມນ໌ດາ

ຖ້າຈິຕສງົບໄດ້ ໕ ນາທີ ຕາມທີ່ໄດ້ອລິษฐານໄວ້ ຕໍ່ໄປໃຫ້ອລິษฐານເພີ່ມວ່າ ຂໍໃຫ້ຈິຕສງົບງຽບໄປໄດ້ນານປຣະມາຕ ໑໐ ນາທີ ຖ້າໄດ້ ໑໐ ນາທີ ຕາມທີ່ໄດ້ອລິษฐານໄວ້ ກໍໃຫ້ອລິษฐານເພີ່ມຂຶ້ນໄປອີກເລື້ອຍໆ ຈົນໄດ້ ໑ ຊົ່ວໂມງ ໒ ໓ ໔ ໕ ໗ ໑໒ ໒໔ ຊົ່ວໂມງ ຫຣືຫລາຍກວ່ານັ້ນ ເພາະບາງຄົນໄດ້ເຖິງ ໓໐ ໔໐ ໗໒ ຊົ່ວໂມງ ກໍມີທັງນີ້ສຸດແທ້ແຕ່ຄວາມຂຍັນຄວາມອົດທົນແລະຄວາມເປັນຜູ້ມີສມາລິດີ ເພາະບຸญກຸສົລ ວາສນາບາຣມີຂອງແຕ່ລະບຸຄຄົລບໍ່ເຫມືອນກັນ

ກາຣປຜິບັຕິລັມມ໌ເປັນເຣື່ອງສງົບ ບໍ່ແມ່ນເຣື່ອງຍຸ່ງ ບໍ່ແມ່ນເຣື່ອງວຸ່ນວາຍ ເຢັນໃຈຕລອດເວລາ ກາຣຈະເຣີນວິປັສສນາເປັນກາຣປຜິບັຕິລັມມ໌ຂັ້ນສູງສຸດໃນທາງພຣະພຸທລສາສນາ ເປັນທາງສາຍເອກ ເປັນຫົວໃຈຂອງພຣະພຸທລສາສນາ ເປັນກາຣປຜິບັຕິເພື່ອໃຫ້ພົ້ນໄປຈາກກິເລສແລະກອງທຸກຂ໌ ເຖິງສັນຕິສຸຂຢ່າງແທ້ຈິງ ຜູ້ທີ່ຈະຊາບຊຶ້ງແລະເຫັນຄວາມອັສຈັຣຍ໌ຂອງພຣະພຸທລສາສນາກໍມີຢູ່ທາງດຽວເທົ່ານີ້ ຄື ຈະເຣີນວິປັສສນາກັມມຖານ

## ເທສນ໌ລຳດັບญาຕ

ເມື່ອຜູ້ປຜິບັຕິຈົບກາຣອລິษฐานແລ້ວ
ພຣະອາຈາຣຍ໌ຜູ້ສອບຜູ້ສອນກໍຈັດໃຫ້ມີເທສນ໌ລຳດັບญาຕຂຶ້ນເປັນເທື່ອເປັນຄຣາວ ປີນຶ່ງອາຈຈະມີພຽງ ໑ ໒ ໓ ເທື່ອເປັນຢ່າງຫລາຍ ມີຫົວຂໍ້ເທສນ໌ຫຍໍ້ໆ ດັ່ງນີ້ ຄື

໑. ເທສນ໌ເຣື່ອງຄວາມມຸ່ງຫມາຍຂອງກາຣຟັງລັມມ໌ລຳດັບญาຕ

໒. ເທສນ໌ເຣື່ອງญาຕ ໑໖ ມີ ນາມຣູປປຣິຈເຈທญาຕ ເປັນຕົ້ນ ຈົນເຖິງ ປັຈຈເວກຂຕญาຕ

໓. ເທສນ໌ເຣື່ອງອຣິຍສັຈ ໔ ໃນແນວປຜິບັຕິ

໔. ເທສນ໌ເຣື່ອງວິສຸທລິ ໗ ທຽບກັບญาຕ ໑໖

໕. ເທສນ໌ເຣື່ອງກິເລສທີ່ລະໄດ້ ທີ່ເຫລືອຢູ່ ມັຄຄ໌ ຜົລ ນິພພານ ແລະວິລີປຜິບັຕິໃນຂັ້ນຕໍ່ໄປອີກ

໖. ເທສນ໌ເຣື່ອງຄຸຕສົມບັຕິຂອງນັກປຜິບັຕິ ໔ ຂໍ້ ເພື່ອໃຫ້ຕັດສິນຕົວເອງ ພິສູຈນ໌ຕົວເອງ

໗. ເຕືອນສຕິຜູ້ປຜິບັຕິ

໘. ໃຫ້ພຣ ຢຖາ ສັພພີ ເປັນແລ້ວພິລີ

# ອານິສົງສ໌ຫຣືຜົລທີ່ຈະໄດ້ຮັບຈາກການຈະເຣີນວິປັສສນາ

ທ່ານກ່າວໄວ້ໃນບາລີວ່າ "**ອເນກສຫສ຺ສາ**" ແປລວ່າການຈະເຣີນວິປັສສນານັ້ນ ມີປຣະໂຍຊນ໌ ມີອານິສົງສ໌ຫລາຍຮ້ອຍຫລາຍພັນ ຈົນບໍ່ສາມາຖຈະນັບປຣະມາຕໄດ້ ດັ່ງນັ້ນໃນທີ່ນີ້ຈະຂໍຍົກມາພໍເປັນຕົວຢ່າງແຕ່ເລັກນ້ອຍ ພໍເຫມາະພໍຄວຣແກ່ການເວລາ ຄືຈະຍົກມາພຽງສ່ວນນ້ອຍໆ ເທົ່າທີ່ສາມາຖຈະນຳມາໄດ້ເທົ່ານັ້ນ ຄື

☞ ເຮັດໃຫ້ນັກປຝິບັຕິເຂົ້າໃຈລັມມະທັ້ງດ້ານປຣິຍັຕິ ແລະດ້ານປຝິບັຕິໄດ້ດີແລະລະອຽດລະອໍຍິ່ງຂຶ້ນ ເຊັ່ນ ເຂົ້າໃຈຄຳວ່າ ຣູປນາມ ພຣະໄຕຣລັກຫຕ໌ ເປັນຕົ້ນ ດີຂຶ້ນກວ່າບໍ່ໄດ້ເຂົ້າປຝິບັຕິຫລາຍເທົ່າ

☞ ເຮັດໃຫ້ມີກຳລັງໃຈເຂັ້ມແຂງ ມີຄວາມຂຍັນ ມີຄວາມອົດທົນ ມີຄວາມຮູ້ຈັກປະຫຍັດຍິ່ງຂຶ້ນເປັນພິເສຫກວ່າແຕ່ກ່ອນ ເຂົ້າໃນຫລັກທີ່ວ່າ "ວິນັຍ ຂຍັນ ອົດທົນ ປະຫຍັດ ພັທນາ ລົດປັນຫາໄດ້ທຸກຢ່າງ" ດັ່ງນີ້

- ພັທນາຈິຕໃຈໃຫ້ເປັນນັກເສັຽສລະຂຶ້ນອີກຫລາຍ ເຫັນແກ່ສ່ວນຣວມ ທຳບໍ່ເຫັນແກອິດເຫມື່ອຍ ແລະບໍ່ເບື່ອຫນ່າຍ ຍິ່ງເຮັດຍິ່ງເພລີນ ຕົງກັນຂ້າມກັບສມັຍກ່ອນເມື່ອຍັງບໍ່ໄດ້ເຂົ້າປຝິບັຕິກັມມຖານ
- ເຮັດໃຫ້ເບິ່ງຫນັງສືລັມມະເພລີດເພລີນ ບໍ່ຮູ້ຈັກເບື່ອ ເຂົ້າໃນຫລັກທີ່ວ່າ ຍິ່ງເບິ່ງຍິ່ງມັນ ບາງວັນອ່ານຫນັງສືລັມມະ ຄົ້ນພຣະໄຕຣປີຝົກເພລີດເພລີນບໍ່ຢາກຫລັບບໍ່ຢາກນອນ
- ເຮັດໃຫ້ອຣິບາຍລັມມະໄດ້ດີຂຶ້ນ ລະອຽດ ສຸຂຸມຂຶ້ນກວ່າເດີມ ເພາະສາມາຖຈະອຣິບາຍໄດ້ທັ້ງ ປຣິຍັຕິ ປຝິບັຕິ ປຝິເວ ເຊິ່ງລຸ່ມເລີກໄປຕາມລຳດັບ ຄືທະເລມຫາສມຸທຣ໌ຈັ່ງນັ້ນ
- ເຮັດໃຫ້ມີສຕິດີຂຶ້ນ ຄວາມຈຳດີຂຶ້ນ ຈຳໄດ້ແມ້ນຍຳ ຈຳໄດ້ແລ້ວບໍ່ຄ່ອຍຫລົງບໍ່ຄ່ອຍລືມ
- ເປັນມຫາກຸສົລ ເປັນບຸລທຸກຂຕະທີ່ລົງມືປຝິບັຕິຫຣືລົງມືສອນຜູ້ອື່ນ ແນະນຳຜູ້ອື່ນ
- ເປັນຄົນບໍ່ປຣະມາທ ເພາະມີສຕິຣະເລີກຢູ່ກັບ ນາມຣູປ ເປັນສ່ວນຫລາຍ
- ໄດ້ບຳເພັລ ສີລ ສມາລິ ປັລລາ ຕາມພຣະພຸທລໂອວາທ
- ໄດ້ເດີນທາງສາຍກາງ ຄື ມັຄຄ໌ ໘
- ໄດ້ເດີນທາງສາຍເອກ ຄື ນຶ່ງບໍ່ມີສອງ
- ໄດ້ບຳເພັລບາຣມີ ໄດ້ຮີບສ້າງບາຣມີ ໄດ້ຕຽມຕົວກ່ອນຕາຍໄວ້ພ້ອມແລ້ວ
- ເຮັດໃຫ້ລລາດຮູ້ຈັກຫລັກຄວາມຈິງ ແລະຮູ້ຈັກຫລັກຊີວິຕປະຈຳວັນດີຂຶ້ນ
- ເຮັດໃຫ້ຮູ້ຈັກປຣມັຕຖລັມມ໌ ບໍ່ຫລົງຕິດຢູ່ໃນສົມມຸຕິບັລລຕິ ອັນເປັນພຽງໂຮງລະຄຣຂອງຊາວໂລກ
- ເຮັດໃຫ້ຄົນຮັກໃຄ່ກັນປອງດອງກັນ ສນິທສນົມກັນ ເຂົ້າກັນໄດ້ດີ ເປັນສເມືອນນຶ່ງລາຕິສນິທ
- ເຮັດໃຫ້ຄົນມີຄວາມເມຕຕາກຣຸຕາຕໍ່ກັນ ອີດູກັນສົງສາຣກັນ ຄອຍຍິນດີອນຸໂມນາສາລຸການໃນເມື່ອເຫັນຜູ້ອື່ນໄດ້ດີ ບໍ່ມີຄວາມຣິຫຍາກັນແລະກັນ

- ເຮັດຄົນໃຫ້ເປັນຄົນ ໃຫ້ດີກວ່າຄົນ ໃຫ້ເດັ່ນກວ່າຄົນ ໃຫ້ເລີສກວ່າຄົນ ໃຫ້ປະເສີກກວ່າຄົນ ໃຫ້ສູງກວ່າຄົນ ແລະເຮັດຄົນໃຫ້ເປັນພຣະ
- ເຮັດຄົນບໍ່ໃຫ້ບຽດບຽນກັນ ບໍ່ໃຫ້ເອົາຣັດເອົາປຽບກັນ ບໍ່ໃຫ້ອິຈສາຣິສຍາກັນແລະກັນ
- ເຮັດຄົນໃຫ້ເປັນຜູ້ວ່າງ່າຍສອນງ່າຍ ບໍ່ມີມານະທິຜຖິ ບໍ່ຖືຕົວ ບໍ່ເຫຍີຫຍິ່ງຈອງຫອງ
- ເຮັດຄົນໃຫ້ຮູ້ຈັກຕົວເອງ ຮູ້ຈັກປົກຄອງຕົວເອງ ຄື ອ່ານຕົວອອກ ບອກຕົວໄດ້ ໃຊ້ຕົວເປັນ ຫຣື ອ່ານຕົວອອກ ບອກຕົວໄດ້ ໃຊ້ຕົວຟັງ
- ເຮັດຄົນໃຫ້ເປັນຜູ້ຫນັກແນ່ນໃນກຕັລຍູກຕເວທິຕາລັມມ໌ ຄື ເປັນຄົນມີຄວາມກຕັລຍູກຕເວທີ ນັ່ນເອງ
- ເຮັດຄົນໃຫ້ຫັນຫນ້າເຂົ້າຫາກັນ ໃຫ້ບັຣຈົບກັນ ເພາະຕ່າງຝ່າຍຕ່າງລົດທິຜຖິມານະລົງຫາກັນ ເຂົ້າກັນໄດ້ເປັນ ກັນເອງ ຮູ້ໃຈກັນດີ
- ເຮັດຄົນໃຫ້ມີ ກາຍ ໃຈ ບໍຣິສຸທ຺ສິ໌ ອ່ອນນ້ອມຫນາວເຢັນ
- ເຮັດຄົນໃຫ້ໄດ້ຮັບຄວາມສຸຂ ໗ ປຣະການ ຄື ສຸຂຂອງມນຸສຍ໌ ສຸຂທິພຍ໌ ສຸຂໃນຊານ ສຸຂໃນວິປັສສນາ ສຸຂໃນມັຄຄ໌ ສຸຂໃນຜົລ ສຸຂຄືນິພພານ ຕາມສົມຄວຣແກ່ການປຜິບັຕິຂອງຕົນໆ ຫຣື ຕາມສົມຄວຣແກ່ ວາສນາບາຣມີຂອງຕົນໆ
- ເຮັດຄົນໃຫ້ພົ້ນຈາກຄວາມເສົ້າໂສກປຣິເທວນາການ ຄືນາງປຜາຈາຣາແລະສັນຕຕິມຫາອຳມາຕຍ໌ ເປັນຕົ້ນ
- ເຮັດຄົນໃຫ້ມີປັຍຍາດັບຄວາມທຸກຂ໌ຮ້ອນທາງກາຍ ທາງໃຈ
- ເຮັດຄົນໃຫ້ເດີນທາງຖືກ ໃຫ້ຮູ້ຈັກວິຖີທາງແຫ່ງຊີວິຕອັນຖືກຕ້ອງໄດ້ດີ ບໍ່ຫລົງທາງ ບໍ່ມົວເມົາ ບໍ່ປຣະມາທ ຮູ້ຈັກສູຕຣ໌ຂອງຄົນທີ່ວ່າ "ເກີດເປັນຄົນ ຄົນໃຫ້ທົ່ວ ປາກບໍ່ລົ້ນ ກົ້ນບໍ່ຮົ່ວ ຊົ່ວບໍ່ເອົາ ເມົາບໍ່ມີ ນີ້ຄືຄົນ" ດັ່ງນີ້
- ເຮັດຄົນໃຫ້ໄດ້ບັຣລຸມັຄຄ໌ຜົລນິພພານເປັນປຣິໂຢສານ

ເຖິງປຜິບັຕິໄດ້ແຄ່ຍາຓ ໑-໔ ຄື ພຽງຢູ່ໃນຍາຕຕົ້ນໆ ຫຣືຍາຕຕ່ຳໆ ຖ້າພຍາຍາມຮັກສາໄວ້ໄດ້ຫຣືປຜິບັຕິຕໍ່ໆ ໄປ ກໍສາມາຖຈະປ້ອງກັນກັຍໃນອບາຍກູມິໄດ້ ດັ່ງມີຫລັກຖານຮັບຮອງໄວ້ໃນວິສຸທ຺ທິມັຄຄ໌ກາຄ ໖ ຫນ້າ ໔໔໙ ວ່າ

**ອິມິນາ ປນ ຍາເຕນ ສມນ຺ນາຄໂຕ ວິປສ຺ສໂກ ພຸທ຺ຘສາສເນ ລທ຺ຘສ຺ສາໂສ ສທ຺ຘປຕິຜໂຖ ນິຍຄຕິໂກ ຈູຮໂສຕາ ປນ຺ໂນ ນາມ ໂຫຕິ**

ຜູ້ຈະເຣີນວິປັສສນາກັມມຖານ ເຖິງຍາຓທີ່ ໔ ຄື ປັຈຈັຍປຣິຄຄຫຍາຓນີ້ແລ້ວ ໄດ້ຄວາມເບົາອົກເບົາໃຈໃນ ພຣະພຸທ຺ຘສາສນາ ໄດ້ທີ່ຫາກຣະລຶກໃນພຣະພຸທ຺ຘສາສນາ ມີຄຕິອັນທ່ຽງ ຄືຕາຍໄປແລ້ວບໍ່ໄປອບາຍກູມິ ຊື່ວ່າເປັນ ຈູຮໂສດາບັນ ຫມາຍຄວາມວ່າ ເປັນຜູ້ເຂົ້າສູ່ກະແສພຣະນິພພານນ້ອຍໆ ເປັນຜູ້ເດີນທາງຖືກແລ້ວ

ຖ້າປຜິບັຕິເຖິງຍານທີ່ ໔ ຄື **ອຸທຍັພພຍຍານ**[18] ເຫັນຮູປແລະນາມເກີດດັບ ເຫັນພຣະໄຕຣລັກษณ์ຊັດ ໕໐% ຊື່ວ່າເປັນຜູ້ມີຊີວິຕອັນປະເສີກ ເຖິງຈະຕາຍເສັ່ງໃນວັນນັ້ນ ກໍຍັງດີກວ່າບຸຄຄົລຜູ້ບໍ່ໄດ້ປຜິບັຕິ ແຕ່ມີຊີວິຕເປັນຢູ່ໄດ້ຕັ້ງ ໑໐໐ ປີ ດັ່ງມີຫລັກຖານຮັບຮອງໄວ້ ປາກົຜຢູ່ໃນພຣະໄຕຣປີຜົກເຫລັ້ມທີ່ ໒໕ ໜ້າທີ່ ໖໐ ວ່າ

**ໂຢ ຈ ວສສສຕໍ ຊີເວ  ອປສສໍ ອຸທຍພພຍໍ**

**ເອກາຫໍ ຊີວິຕໍ ເສຢໂຢ  ປສສໂຕ ອຸທຍພພຍໍ**

ຜູ້ຈະເຣີຍວິປັສສນາກັມມຖານເຖິງຍານທີ່ ໔ ອຸທຍັພພຍຍານ ເຫັນຄວາມເກີດດັບຂອງຮູປແລະນາມ ເຖິງແມ້ຈະມີຊີວິຕຢູ່ໄດ້ພຽງວັນດຽວ ກໍຍັງປະເສີກກວ່າບຸຄຄົລຜູ້ບໍ່ເຫັນຄວາມເກີດດັບຂອງຮູປນາມ ແຕ່ມີຊີວິຕເປັນຢູ່ໄດ້ຕັ້ງ ໑໐໐ ປີ

ຖ້າຊາຕິນີ້ຍັງບໍ່ໄດ້ສຳເຣັຈມັຄຄ໌ຜົລນິພພານ ກໍຈະເປັນປັຈຈັຍໃຫ້ໄດ້ສຳເຣັຈມັຄຄ໌ຜົລນິພພານໃນຊາຕິຕໍ່ໄປ ຄື ຖ້າຈະເຣີຍວິປັສສນາໃນປຖົມວັຍ ຄືຕັ້ງແຕ່ອາຍຸ ໗ ຂວບ ເຖິງ ໒໕ ປີ ແຕ່ບໍ່ສຳເຣັຈ ກໍຈະເປັນປັຈຈັຍໃຫ້ໄດ້ສຳເຣັຈໃນມັຊຊິມວັຍ ຄື ຕັ້ງແຕ່ອາຍຸ ໒໕ ປີ ເຖິງອາຍຸ ໕໐ ປີ

ຖ້າຍັງບໍ່ສຳເຣັຈໃນມັຊຊິມວັຍນີ້ ກໍຈະເປັນປັຈຈັຍໃຫ້ໄດ້ສຳເຣັຈໃນປັຈຈິມວັຍ ຄືຕັ້ງແຕ່ອາຍຸ ໕໑ ປີເຖິງອາຍຸ ໗໕ ປີ

ຖ້າຍັງບໍ່ສຳເຣັຈໃນປັຈຈິມວັຍນີ້ ກໍຈະເປັນປັຈຈັຍໃຫ້ໄດ້ສຳເຣັຈໃນມໍຣຕສມັຍ ຄືໃນເວລາໃກ້ຈະຕາຍ ຖ້າບໍ່ສຳເຣັຈໃນເວລາໃກ້ຕາຍ ກໍຈະເປັນປັຈຈັຍໃຫ້ໃຈບໍຣິສຸທຣິ໌ ແລ້ວໄປເກີດໃນສວັຣຄ໌ ສົມດັ່ງພຣະບາລີວ່າ **ຈິຕເຕ ອສງກິລິຜເຖ ສຸຄຕິ ປາຜິກງຂາ** ເມື່ອໃຈບໍ່ເສົ້າໝອງ ຄືໃຈບໍຣິສຸທຣິ໌ແລ້ວ ສຸຄຕິກໍເປັນອັນຫວັງໄດ້ດັ່ງນີ້ ຈະໄດ້ສຳເຣັຈເທິງສວັຣຄ໌ພຸ້ນ

ຖ້າຍັງບໍ່ສຳເຣັຈເທິງສວັຣຄ໌ພຸ້ນ ກໍຈະເປັນປັຈຈັຍໃຫ້ໄດ້ຟັງລັມມ໌ກ່ອນຈະໝົດສາສນາ ພຣະອັຜຖິຖາຕຸທັ້ງຫລາຍຈະໄດ້ມາຮວມກັນເປັນອົງຄ໌ພຣະພຸທລເຈົ້າ ທຣົງສະແດງລັມມ໌ຢູ່ ໗ ວັນ ໗ ຄືນ ກໍຈະໄດ້ມີໂອກາສມາຟັງລັມມ໌ປຜິບັຕິລັມມ໌ໃນສມັຍນັ້ນ ແລ້ວຈະໄດ້ສຳເຣັຈມັຄຄ໌ຜົລນິພພານໃນຕອນນັ້ນ

ຖ້າຍັງບໍ່ສຳເຣັຈໃນຕອນນັ້ນ ກໍຈະໄດ້ເກີດທັນສາສນາຂອງພຣະສຣີອຣິຍເມຕຕຣັຍ ໄດ້ຟັງລັມມ໌ຕໍ່ພຣະພັກຕຣ໌ຂອງພຣະອົງຄ໌ ແລ້ວໄດ້ສຳເຣັຈມັຄຄ໌ຜົລນິພພານໂດຍໄວທີ່ສຸດ ຄືພາຫິຍະທາຣຸຈີຣິຍະ ພຣະອັຍຍາໂກຜັຍຍະ ພຣະວັປປະ ພຣະພັທທິຍະ ພຣະມຫານາມ ພຣະອັສສຊິ ພຣະສາຣີບຸຕຣ໌ ພຣະມຫາໂມຄຄັລລານະ ເປັນຕົ້ນ

ຖ້າບໍ່ໄດ້ພົບພຣະສຣີອຣິຍເມຕຕຣັຍ ຫຣືສາວົກຂອງພຣະສຣີອຣິຍເມຕຕຣັຍ ເກີດໃນສຸຍກັປປ໌ ຄື ກັປປ໌ທີ່ວ່າງຈາກພຣະພຸທລເຈົ້າ ກໍຈະໄດ້ເປັນພຣະປັຈເຈກພຸທລເຈົ້າ ໄດ້ຕຣັສຮູ້ມັຄຄ໌ຜົລນິພພານດ້ວຍຕົນເອງ ດັ່ງນີ້

- ທຳກິເລສ ຄື ໂລກະ ໂທສະ ໂມຫະ ມານະ ທິຜຖິ ເປັນຕົ້ນ ໃຫ້ເບົາບາງລົງ
- ເຮັດໃຫ້ເປັນຄົນມີໃຈສຸຂຸມໜາວເຢັນ

---

[18] **ອຸທຍັພພຍຍານ** ອ່ານວ່າ "ອຸ-ທະ-ຍັບ-ພະ-ຍະ-ຍານ" ນ. ວິປັສສນາຍານທີ່ ໔

- ເຮັດໃຫ້ເປັນຄົນມີສະຕິຮອບຄອບ ຄືຣິຖຸທີ່ມີເຄື່ອງຫ້າມລໍ້ດີຈັ່ງນັ້ນ
- ເຮັດໃຫ້ສມາທິດີ ເຮັດໃຫ້ຄວາມຈຳດີຂຶ້ນ ເຮັດໃຫ້ຮຽນຫນັງສືເກັ່ງ ເປັນປຣະໂຍຊນ໌ແກ່ຮັກຮຽນ ນັກສຶກສາຫລາຍ
- ເຮັດໃຫ້ໂຣຄກັຍໄຂ້ເຈັບຕ່າງໆ ຫາຍໄປ ເຊັ່ນ ໂຣຄປຣະສາທ ໂຣຄອັມພາຕ ໂຣຄກະເພາະ ໂຣຄປວດຫົວ ເປັນຕົ້ນ

ສາມາຖເປັນປັຈຈັຍນຳໄປເກີດໃນສວັຣຄ໌ໄດ້ ເຊັ່ນ ພຣະກິກຂຸອົງຄ໌ນຶ່ງທ່ານຈະເຣີນວິປັສສນາກັມມຖານເຖິງຍານທີ່ ໔ ແລ້ວມໍຣຕກາພລົງດ້ວຍໂຣຄລົມ ໄດ້ໄປບັງເກີດໃນສວັຣຄ໌ຊັ້ນດາວດຶງສ໌ ລົງມາຂາບພຣະພຸທສເຈົ້າຂໍຟັງທັມມ໌ ປຜິບັຕິທັມມ໌ ຕໍ່ໃນທີ່ສຸດກໍໄດ້ສຳເຣັຈເປັນພຣະໂສດາບັນ ເມື່ອໄປສເວີຍຣົມຍ໌ຊົມສົມບັຕິຢູ່ໃນເທວໂລກສືບຕໍ່ໄປ

ເຮັດໃຫ້ມີຄວາມເຊື່ອຄວາມເລື່ອມໃສໃນພຣະຣັຕນຕຣັຍຫນັກແນ່ນມັ່ນຄົງຍິ່ງຂຶ້ນໄປເປັນຮ້ອຍເທົ່າພັນທວີ

ສະດວກແກ່ການປົກຄອງ ຄື ເຮັດໃຫ້ຜູ້ທີ່ໄດ້ຮັບການອົບຮົມໄປແລ້ວນັ້ນເປັນຜູ້ປົກຄອງງ່າຍ ບໍ່ກໍ່ຄວາມເດືອດຮ້ອນໃຫ້ເກີດຂຶ້ນແກ່ຫມູ່ ແກ່ຄຕະ ແກ່ສັງຄົມທົ່ວໆ ໄປ

ກັນໂງ່ ເພາະມີສະຕິ ສະຕິເປັນຄູ່ປຣັບກັບໂມຫະ ຄື ຄວາມໂງ່ ເພາະໂມຫະນີ້ແຫລະເປັນຕົວໂງ່ ຢ່າງສຳຄັນທີ່ສຸດຂອງແຕ່ລະບຸຄຄົລ

ມີສະຕິຕັ້ງມັ່ນດີທັ້ງໃນຍາມປກຕິແລະໃນຍາມໃກ້ຈະຕາຍ

ເຮັດໃຫ້ຄົນມີສີລທັມມ໌ ວັຒນທັມມ໌ ອາຣຍທັມມ໌ ຈຣິຍທັມມ໌ອັນດີງາມສ່ວນຫລາຍຈະມີສີລ ໕ ມັ່ນເປັນນິຈ

ເດັກນັກຮຽນທີ່ມີຄວາມຈຳໄດ້ບໍ່ດີ ຮຽນຫນັງສືບໍ່ເກັ່ງ ກໍຈະມີຄວາມຈຳດີຂຶ້ນ ຮຽນຫນັງສືເກັ່ງຂຶ້ນ ອີກຫລາຍເທົ່າແທ້ໆ ເພາະມີຕົວຢ່າງມາຫລາຍຕໍ່ຫລາຍແລ້ວ

ແກ້ນິສັຍຄົນບໍ່ດີຫລາຍ ຄື ຄົນທີ່ເປັນພາລເກເຣ ເຊັ່ນ ອັນຕພາລນັກໂທษ ຖ້າໄດ້ຈະເຣີນວິປັສສນາກັມມຖານແລ້ວ ຈະເມື່ອຕົວເປັນຄົນລະຄົນ ຖ້ານັກໂທษແຕ່ລະຄົນໄດ້ເຂົ້າປຜິບັຕິແລ້ວເວລາປ່ອຍອອກໄປຈະບໍ່ເມືອມາສູ່ຄຸກສູ່ຫ້ອງຂັງອີກເລີຍ

ຖ້າຝຶກສມາທິໄດ້ດີແລ້ວ ຈະມີສຸຂກາພທາງຈິຕດີເພາະໄດ້ພັຒນາຈິຕມາດີ ເຂົ້າໃນຫລັກທີ່ວ່າ ກິເລສເປັນພິษເຮັດໃຫ້ຈິຕແປຣປຣວນ ສມາທິເທົ່ານັ້ນທັ້ງກັນທັ້ງແກ້ ແລະສາມາຖຈະນັ່ງໄດ້ເປັນເວລານານໆ ຫລາຍຊົ່ວໂມງ ເລີ້ມຕັ້ງແຕ່ ໕ ນາທີໄປ ຈົນເຖິງ ໒໔ ຊົ່ວໂມງ ໓໐ ໔໐ ໗໒ ຊົ່ວໂມງກໍໄດ້ ເພາະເຄີຍມີມາແລ້ວ

ຊື່ວ່າໄດ້ບູຊາພຣະພຸທສເຈົ້າດ້ວຍການບູຊາຢ່າງສູງທີ່ສຸດ ດັ່ງພຣະບາລີທີ່ພຣະພຸທສອົງຄ໌ໄດ້ຕຣັສໄວ້ ປາກົຝຢູ່ໃນພຣະໄຕຣປິຝົກ ເຫລັ້ມທີ່ ໑໐ ຫນ້າທີ່ ໑໕໐-໑໕໑ ວ່າ

**ໂຍ ໂຂ ອານນຸທ ກິກຸຂຸ ວາ ກິກຸຂຸນີ ວາ ອຸປາສໂກ ວາ ອຸປາສິກາ ວາ ລມຸມານຸລມຸມປຜິປນຸໂນ ວິຫຣຕິ ສາມີຈິປຜິປນຸໂນ ອນຸລມຸມຈາຣີ ໂສ ຕຖາຄຕໍ ສກຸກໂຣຕິ ຄຣຸກໂຣຕິມາເນຕິ ປູເຊຕິ ປຣມາຍ ປູຊາຍ**

ດູຣາອານົນທ໌ ຜູ້ໃດເປັນກິກຂຸກໍຕາມ ເປັນກິກຂຸຕີກໍຕາມ ເປັນອຸບາສົກກໍຕາມ ເປັນອຸບາສິກາກໍຕາມ ຖ້າໄດ້ປຜິບັຕິລັມມ໌ສົມຄວຣແກ່ລັມມ໌ ປຜິບັຕິຊອບຍິ່ງ ປຜິບັຕິຕາມລັມມ໌ຢູ່ ຜູ້ນັ້ນ ຊື່ວ່າໄດ້ສັກກາຣະ ໄດ້ເຄົາຣົພ ໄດ້ນັບຖື ໄດ້ບູຊາຕຖາຄົຕດ້ວຍກາຣບູຊາຢ່າງສູງ ດັ່ງນີ້

ຊື່ວ່າໄດ້ຊ່ອຍກັນຮັກສາພຣະສັທລັມມ໌ໄວ້ບໍ່ໃຫ້ເສື່ອມສົມດັ່ງພຣະບາລີວ່າ

**ຈຕຸນຸນໍ ໂຂ ອາວຸໂສ ສຕິປຜຸຖານານໍ ກາວິຕຕຸຕາ ພຫຸລີກຕຕຸຕາ ສມຸລມຸມອປຣິຫານໍ ໂຫຕິ**

ດູຣາອາວຸໂສ ພຣະສັທລັມມ໌ຈະບໍ່ເສື່ອມ ກໍເພາະພຸທລບໍຣິບັທພາກັນປຜິບັຕິຕາມສຕິປັຜຖານ ໔ ດັ່ງນີ້

ຊື່ວ່າໄດ້ຊ່ອຍກັນເຜີຍແຜ່ພຣະພຸທລສາສນາ ໃຫ້ຈະເຣີນຮຸ່ງເຮືອງດຳຣົງສຖຽຣກາພຢູ່ຕລອດກາລນານ ສົມດັ່ງຫລັກຖານຮັບຮອງໄວ້ວ່າ

**ຢາວ ຫີ ອິມາ ຈຕສຸໂສ ປຣິສາ ມໍ ອິມາຍ ປຜິປຕຸຕິປູຊາຍ ປູເຊສຸສນຸຕິ ຕາວມມສາສນໍ ນກມຊເຊ ປຸຕຸຕຈນຸໂທ ວິຍ ວິໂຣເຈສຸສຕິ**

ຈິງຢູ່ ຖ້າບໍຣິບັທທັ້ງ ໔ ນີ້ ຈະບູຊາເຮົາດ້ວຍກາຣປຜິບັຕິນີ້ຢູ່ຕຣາບໃດ ສາສນາຂອງເຮົາຈະເຣີນຮຸ່ງເຮືອງປານດັ່ງພຣະຈັນທຣ໌ເພັນລອຍເດັ່ນຈ້າຢູ່ທ່າມກາງນກາຕຣາບນັ້ນ ດັ່ງນີ້

ຊື່ວ່າໄດ້ເຫັນພຣະພຸທລອົງຄ໌ ເພາະໄດ້ເຫັນພຣະລັມມ໌ ສົມດັ່ງທີ່ຕຣັສກັບພຣະວັກກລິວ່າ

**ໂຍ ໂຂ ວກຸກລິ ລມຸມໍ ປສຸສຕິ ໂສ ມໍ ປສຸສຕິ ໂຍ ມໍ ປສຸສຕິ ໂສ ລມຸມໍ ປສຸສຕິ**

ດູຣາວັກກລິ ຜູ້ໃດເຫັນລັມມ໌ ຜູ້ນັ້ນຊື່ວ່າເຫັນເຮົາ ຜູ້ໃດເຫັນເຮົາ ຜູ້ນັ້ນຊື່ວ່າເຫັນລັມມ໌ ດັ່ງນີ້

ຊື່ວ່າໄດ້ມີຄວາມຈົງຮັກກັກດີ ມີຄວາມເຄົາຣົພຮັກໃຄ່ຣໃນພຣະພຸທລອົງຄ໌ເປັນພິເສສ ສົມດັ່ງພຣະບາລີ ເຊິ່ງປາກົຜຢູ່ໃນລັມມປທັຜຖກຖາ ກາຄ ໖ ວ່າ

**ກິກຂເວ ມຍີ ສສິເນໂຫ ຕິສຸສສທິໂສ ວ ໂຫຕຸ ຄນຸລມາລາທີຫິ ປູຊໍ ກໂຣນຸຕາປິ ເນວ ມໍ ປູເຊນຸຕິ ລມຸມານຸລມຸມປຜິປຊຊມານາເຢວ ປນ ມໍ ປູເຊນຸຕິ**

ດູຣາກິກຂຸທັ້ງຫລາຍ ຜູ້ທີ່ມີຄວາມຈົງຮັກກັກດີໃນເຮົາ ຈົງເປັນເຊັ່ນກັບພຣະຕິສສະເຖຣະເຖີດ (ພຣະຕິສສະເຖຣະທ່ານຈະເຣີນວິປັສສນາກັມມຖານ ກໍຈົງພາກັນຈະເຣີນວິປັສສນາກັມມຖານເຫມືອນທ່ານເຖີດ) ເຖິງແມ້ວ່າບໍຣິບັທທັ້ງ ໔ ພາກັນທຳກາຣບູຊາເຮົາດ້ວຍຂອງຫອມແລະດອກໄມ້ນານັບປຣະກາຣ ກໍຍັງບໍ່ຊື່ວ່າໄດ້ບູຊາເຮົາຢ່າງແທ້ຈິງ ສ່ວນພຸທລບໍຣິບັທທັ້ງຫລາຍທີ່ໄດ້ປຜິບັຕິລັມມ໌ສົມຄວຣແກ່ລັມມ໌ເທົ່ານັ້ນ ຈຶ່ງຈະຊື່ວ່າໄດ້ບູຊາເຮົາດ້ວຍກາຣບູຊາຢ່າງແທ້ຈິງ ດັ່ງນີ້

ຊື່ວ່າໄດ້ບຳເພັນກອງກຸສົລອັນຍິ່ງໃຫຍ່ໄພສາລແທ້ໆ ຂໍ້ນີ້ມີພຣະບາລີເຊິ່ງປາກົຍຢູ່ໃນພຣະໄຕຣປີຝົກ ເຫລັ້ມທີ່ ໙ ຫນ້າທີ່ ໑໔໙ ຮັບຮອງໄວ້ວ່າ

**ກຸສລຣາສີຕິ ກິກຂເວ ວທມາໂນ ຈຕຸຕາໂຮ ສຕິປຝຸກາເນ ສມຸມາ ວທມາໂນ ວເທຢຸຢ**

ດູຣາກິກຂຸທັ້ງຫລາຍ ເມື່ອຈະກ່າວວ່າກອງແຫ່ງກຸສົລ ຈະຕ້ອງກ່າວເຖິງສຕິປັຝການທັ້ງ ໔ ດັ່ງນີ້

ຊື່ວ່າໄດ້ຕັດເວນຕິກັງຂາ ຄື ຂໍ້ຂ້ອງໃຈສົງສັຍຂອງຕົວເອງ ເຊິ່ງໄດ້ເຄີຍສົງສັຍວ່າ ສມັຍນີ້ມັຄຄ໌ຜົລນິພພານຈະມີຢູ່ ຫຣືບໍ່ນໍ ເຊິ່ງສອດຄລ້ອງຕ້ອງຕາມພຣະບາລີທີ່ປາກົຍຢູ່ໃນພຣະໄຕຣປີຝົກ ເຫລັ້ມທີ່ ໑໐ ຫນ້າທີ່ ໑໗໕-໑໗໙ ວ່າ

**ອີມສຸມິຌຈ ໂຂ ສຸກທຸທ ຄມຸມວິນເຢ ອຣິໂຢ ອຝຸກງຄິໂກ ມຄຸໂຄ ອຸປລພຸກຕິ ສມໂຕປີ ຕຕຸຖ ອຸປລພຸກຕິ ໆ ເປໆ ອີເມ ຈ ສຸກທຸທ ກິກຂູ ສມຸມາ ວິຫເຣຢຸຢຸ ອສຸຌໂຌ ໂລໂກ ອຣຫນຸເຕຫິ ອສຸສ**

ດູຣາສຸກັທທະ ໃນພຣະລັມມ໌ວິນັຍນີ້ ຖ້າຍັງມີອັຝກັງຄິກມັຄຄ໌ອັນປະເສີກຸຢູ່ຕຣາບໃດ ແມ້ພຣະໂສດາບັນ ພຣະສກທາຄາມີ ພຣະອນາຄາມີ ພຣະອຣຫັນຕ໌ ກໍຍັງມີຢູ່ຕຣາບນັ້ນ ຯລຯ ດູຣາສຸກັທທະ ຖ້າກິກຂຸທັ້ງຫລາຍ ຄວຣພາກັນປະພຶຕ ປຝິບັຕິຢູ່ໂດຍຊອບ ໂລກກໍບໍ່ຄວຣວ່າງເປົ່າຈາກພຣະອຣຫັນຕ໌ ດັ່ງນີ້

ພຣະອັຕຖກຖາຈາຣຍ໌ຍັງໄດ້ກ່າວຮັບຮອງຄວາມຂໍ້ນີ້ໄວ້ອີກ ເຊິ່ງປາກົຍຢູ່ໃນສຸມັງຄລວິລາສີນີອັຕຖກຖາທີຄນິກາຍ ປາຝິກວັຄຄ໌ ກາຄ ໓ ຫນ້າທີ່ ໑໑໑-໑໑໔ ແຖວທີ່ ໑ ແລະແຖວທີ່ ໑-໔ ວ່າ

**ປຝິສມຸກິທປຸປຕຸເຕຫິ ວສຸສສຫສຸສໍ ອຝຸກາສິ** ພັນປີທີ່ ໑ ເປັນຍຸຄຂອງພຣະອຣຫັນຕ໌ຜູ້ແຕກຈານໃນປຝິສັມກິທາ

**ຈຕກິຌເຌຫິ ວສຸສສຫສຸສໍ** ພັນປີທີ່ ໔ ເປັນຍຸຄຂອງພຣະອຣຫັນຕ໌ຜູ້ໄດ້ອກິຌຌາ ໖

**ເຕວິຊຊເຫິ ວສຸສສຫສຸສໍ** ພັນປີທີ່ ໓ ເປັນຍຸຄຂອງພຣະອຣຫັນຕ໌ຜູ້ໄດ້ວິຊາ ໓

**ສຸກຂວິປສຸສເກຫິ ວສຸສສຫສຸສໍ** ພັນປີທີ່ ໔ ເປັນຍຸຄຂອງພຣະອຣຫັນຕ໌ຜູ້ຈະເຣີຌວິປັສສນາລ້ວນ

**ປາຝິໂມກຂເຫິ ວສຸສສຫສຸສໍ ອຝຸກາສິ** ພັນປີທີ່ ໕ ເປັນຍຸຄຂອງພຣະອນາຄາມີ ພຣະສກທາຄາມີ ແລະພຣະໂສດາບັນ ດັ່ງນີ້

ຊື່ວ່າເຮົາໄດ້ປຝິບັຕິຕາມຄຳສັ່ງສອນຂອງພຣະອົງຄ໌ທັ້ງ ໓ ປີຝົກ ຄື ພຣະວິນັຍ ພຣະສູຕຣ໌ ພຣະອກິລັມມ໌ ສົມດັ່ງຫລັກການທີ່ມີປາກົຍຢູ່ໃນລັມມ໌ບົທກາຄ ໔ ຫນ້າທີ່ ໖໐ ແຖວທີ່ ໑ ຮັບຮອງໄວ້ວ່າ (ຈບັບມຫາຈຸຬາລົງກຣຕຣາຊ ວິທຍາລັຍ)

**ສກລ໌ປິ ທິ ເຕປີຝກ໌ ພຸທຸລວຈນ໌ ອາຫຣິຕຸວາ ກຖິຢມານ໌ ອປຸປມາທເມວ ໂອຕຣຕິ**

ຈຶ່ງຢູ່ພຣະພຸທຂພົຈນ໌ ຄື ຄຳສັ່ງສອນຂອງພຣະພຸທຂເຈົ້າຈົບທັ້ງ ៨ ປີພົກ ແມ້ທັ້ງຫມົດຄືບໍ່ເຫລືອເລີຍຈັກຕົວທີ່ພຣະນັກເທສນ໌ ພຣະລັມມກຖິກ ນຳມາສະແດງໃຫ້ພຸທຂບໍຣິພັທຟັງຢູ່ນັ່ນ ຍ່ອມຮວມລົງສູ່ຈຸດດຽວເທົ່ານັ້ນ ຄື ຄວາມບໍ່ປຣະມາທ

**ໂສ ປເນສ ອຕຸຖໂຕ ສຕິຢາ ອວິປຸປວາໂສ ນາມ**

ກໍອັນຄວາມບໍ່ປຣະມາທນີ້ນັ້ນ ໂດຍໃຈຄວາມກໍໄດ້ແກ່ການບໍ່ຢູ່ປຣາສຈາກສຕິຯ ຄົນມີສຕິກໍຄືຄົນຈະເຣີນສຕິປັຜຖານ ៤ ຄົນຈະເຣີນສຕິປັຜຖານ ៤ ກໍຄືຄົນຈະເຣີນວິປັສສນາກັມມຖານນັ່ນເອງ

ໄດ້ບັຣຍາຍເຣື່ອງທາງ ໆ ສາຍ ພ້ອມທັ້ງອານິສົງສ໌ແຫ່ງການຈະເຣີນວິປັສສນາກັມມຖານມາກໍນັບວ່າສົມຄວຣແກ່ກາລເວລາແລ້ວ ຂໍຍຸຕິລົງຄົງໄວ້ແຕ່ພຽງເທົ່ານີ້

***ອິທໍ ເມ ປຸໝໍ ນິພຸພານສຸສ ປຈຸຈໂຢ ໂຫຕຸ***

***ອິທໍ ເມ ປຸຸໝຄາຄໍ ສພຸພສຕຸຕານໍ ເທມິ***



...ອາຈາຣຍ໌ໄພທູຣຍ໌ ອິນທວົງສ໌ ພ.ສ. **໒໕໕໗**